# ເພງລາວອະມະຕະ

## ເນື້ອຮ້ອງພ້ອມດ້ວຍໂນຕສາກົນ

ສະບາຍດີທ່ານຜູ້ອ່ານ,

ເມື່ອບໍ່ນານມານີ້, ຂ້າພະເຈົ້າໄດ້ທຳການລິເລີ່ມນຳເອົາເພງລາວເກົ່າ ມາກ່າຍຂຽນ ເປັນໂນຕສາກົນແລະເສບເປັນແບບດົນຕຣີບັນເລງ (ບໍ່ມີສຽງຂັບຮ້ອງນຳ), ຈຸດປະສົງ ແມ່ນບໍ່ໄດ້ຫວັງໃຫ້ບັນລຸຄວາມສົມບູນແບບ ໃນການຜະສົມປະສານສຽງ ຫຼືແນໃສ່ເອົາຄຸນນະພາບຂອງການບັນທຶກສຽງ ຫຼືວີດີໂອການເສບບັນເລງ ທາງດ້ານເຄື່ອງດົນຕຣີແຕ່ຢ່າງໃດ. ເພາະວ່າເປົ້າໝາຍ ບໍ່ແມ່ນເພື່ອສຳລັບການອອກເປັນ CD ຫຼື DVD. ແຕ່ວ່າ ມັນແມ່ນຄວາມປະສົງຢາກແລກປ່ຽນແລະແບ່ງປັນຄວາມຮູ້ ຄວາມສາມາດສ່ວນຕົວຂອງຂ້າພະເຈົ້າກັບຄົນອື່ນ (ຜູ້ທີ່ສົນໃຈ), ໂດຍສະເພາະ ແມ່ນອີງໃສ່ຂໍ້ມູນຕົ້ນສະບັບຂອງຜູ່ປະພັນເພງຕົ້ນຕໍເທົ່າທີ່ຄົ້ນຄວ້າແລະຊອກຫາມາໄດ້.

ແນ່ນອນວ່າ ມັນຍັງຈະບໍ່ສົມບູນແລະຍັງມີຂໍ້ຂາດຕົກບົກພ່ອງຢູ່ ແຕ່ຈະພະຍາຍາມດັດແປງແລະແກ້ໄຂຕາມເວລາອຳນວຍ.

ທັງນີ້ ແມ່ນເພື່ອໃຫ້ຄົນຮຸ່ນໃໝ່ແລະຮຸ່ນເກົ່າ ຫຼືຄົນຊາດອື່ນເຖິງວ່າຈະບໍ່ແມ່ນຄົນລາວ (ຖ້າຫາກວ່າພວກເຂົາເຈົ້າຫາກມີຄວາມສົນໃຈໃນສຽງເພງແລະດົນຕຣີລາວ ໂດຍສະເພາະແມ່ນຜູ່ທີ່ມີຄວາມສາມາດອ່ານແລະເຂົ້າໃຈໂນຕດົນຕຣີເປັນຫຼືບໍ່ເປັນກໍຕາມແຕ່) ໄດ້ມີບ່ອນອີງເປັນຂໍ້ມູນໃນການສຶກສາແລະຄົ້ນຄວ້າ. ຈຸດປະສົງກ່ອນອື່ນ ແມ່ນຫຼີກລ່ຽງການບິດເບືອນຕົ້ນສະບັບອັນດັ້ງເດີມ ກ່ຽວກັບ ຊື່ເພງ ຊື່ຜູ້ແຕ່ງ ນັກຮ້ອງຕົ້ນສະບັບ ເນື້ອເພງ ຣະດັບສຽງ ແລະ ຈັງຫວະຕົ້ນຕໍ.

ເນື່ອງຈາກວ່າໃນເວລາຫຼາຍປີທີ່ຜ່ານມາ, ຂ້າພະເຈົ້າໄດ້ຕິດຕາມແລະສັງເກດເຫັນວ່າ ໃນບັນດາການນຳເອົາເພງລາວເກົ່າມາບັນເລງແລະຂັບຮ້ອງໃໝ່ຈຳນວນໜຶ່ງ, ມີຂໍ້ຂາດຕົກບົກພ່ອງທາງດ້ານຊື່ເພງ ຊື່ຜູ້ແຕ່ງ ເນື້ອຮ້ອງທຳນອງແລະຈັງຫວະ. ມັນໄດ້ສ້າງຄວາມສັບສົນແລະຄວາມເຂົ້າໃຈຜິດ ມີການຂັດແຍ່ງຖົກຖຽງກັນໃນໝູ່ຜູ້ຟັງ ຫຼືນັກດົນຕຣີທີ່ພະຍາຍາມຈະເສບແລະບັນເລງໂດຍສະເພາະ.

ສາເຫດຄືວແມ່ນຍ້ອນຂາດຂໍ້ມູນ ຂໍ້ບັນທຶກຂີດຂຽນອັນຖືກຕ້ອງ ມີແຕ່ອາສັຍຄວາມຈື່ຈຳ ອັນມີຂອບເຂດຈຳກັດເປັນທີ່ເພິ່ງ ແລະບາງຈຳນວນກໍມີການເດົາເອົາກໍມີ ເພາະຂາດຄວາມແນ່ນອນໃຈ.

ຂ້າພະເຈົ້າເປັນຜູ່ໜຶ່ງ ທີ່ມີຄວາມມັກຮັກໃນສຽງເພງແລະດົນຕຣີລາວມາແຕ່ນ້ອຍ ບໍ່ເຄີຍໄດ້ເຂົ້າໂຮງຮຽນດົນຕຣີແຫ່ງໃດມາກ່ອນ ອາສັຍແຕ່ການສຶກສາ ແລະຄົ້ນຄວ້າດ້ວຍຕົນເອງຕລອດມາ ດ້ວຍຄວາມມັກຮັກແຕ່ຢ່າງດຽວ ເພາະເປັນຄົນມັກອ່ານແລະມີຈິດໃຈກະຕືລືລົ້ນຊອກຫາເຫດຜົນ.

ຂ້າພະເຈົ້າຄິດແລະເຂົ້າໃຈວ່າ ໂນຕດົນຕຣີສາກົນ (solfège)
ແມ່ນວິຊາສາດແລະທິດສະດີແບບໜຶ່ງ ຊຶ່ງເປັນພື້ນຖານຂອງດົນຕຣີແລະສຽງເພງ,
ເນື່ອງຈາກວ່າມັນແມ່ນລາຍລັກອັກສອນຂອງສຽງ ເຊັ່ນດຽວກັນກັບ
ການຂີດຂຽນຂອງພາສາປາກເວົ້າ. ມັນມີຣະບຽບແລະກົດເກນຂໍ້ບັງຄັບຂອງມັນເອງ
ເພື່ອບົ່ງບອກບົດເພງຈົນໄປຮອດການເສບບັນເລງດ້ວຍເຄື່ອງດົນຕຣີຕ່າງໆຢ່າງຄົບຖ້ວນ.
ຖ້າບໍ່ມີໂນຕແລະກົດເກນດັ່ງກ່າວ, ມັນກໍເປັນການຍາກແລະລໍາບາກ
ໃນການຕິດຕໍ່ແລະສື່ສານກັບຄົນອື່ນ ແມ່ນແຕ່ການສົນທະນາລະຫວ່າງ
ນັກດົນຕຣີແລະນັກສິລະປິນດ້ວຍກັນ.
ເພາະທີ່ຜ່ານມາ ແມ່ນອາສັຍພຽງແຕ່ຄວາມຈື່ຈໍາແລະຮັບຟັງດ້ວຍຫູ ແບບຖ່ອງຂຶ້ນໃຈ
ສ່ວນການບັນທຶກຂີດຂຽນແມ່ນບໍ່ມີຫຼັກການພຽງພໍແລະບໍ່ຄົບຖ້ວນສົມບູນຕາມແບບສາກົນ.

ຂ້າພະເຈົ້າບໍ່ຫານຍົກເອົາຄວາມຮູ້ທາງດ້ານໂນຕດົນຕຣີທີ່ໄດ້ຮໍ່າຮຽນດ້ວຍຕົນເອງ
ມາເປັນຫຼັກອ້າງອີງເພື່ອສັ່ງສອນຫຼືຕັດສິນຕໍານິຕິຕຽນນັກສິລປິນ ຜູ້ທີ່ບໍ່ມີໂອກາດ
ຫຼືເວລາໃນການຮຽນຮູ້ທິດສະດີດົນຕຣີ ເພາະບາງທີຍ້ອນເຫດຜົນສ່ວນຕົວຫຼືອື່ນໆ,
ເພາະສັງເກດເຫັນວ່າ ຜ່ານມາພວກເຂົາເຈົ້າກໍສາມາດເຮັດປະດິດຄິດສ້າງບົດເພງຂຶ້ນມາໄດ້
ຈົນສໍາເຣັດເປັນຜົນງານ ແລະກາຍເປັນນໍລະດົກອະມະຕະ
ໃຫ້ພວກເຮົາໄດ້ເຫັນແລະໄດ້ຟັງຈົນເທົ່າສູ່ມື້ນີ້...

ທັງຫມົດນີ້ ພາໃຫ້ຂ້າພະເຈົ້າຕັດສິນໃຈ ລົງມືທໍາການຮິບໂຮມ
ແລະແບ່ງປັນເພງລາວອະມະຕະຈໍານວນນຶ່ງ ເປັນໂນຕສາກົນ ພ້ອມດ້ວຍເນື້ອຮ້ອງ ແລະ
ທໍານອງຈັງຫວະ ໂດຍບໍ່ຍົກເວັ້ນການລະບຸຊື່ຂອງຜູ່ປະພັນແລະຜູ່ຂັບຮ້ອງຕົ້ນສະບັບ
ດ້ວຍຄວາມເຄົາຣົບແລະນັບຖື ບັນດານັກປະພັນເພງຜູ້ອາວຸໂສ ຊຶ່ງມີຈໍານວນນຶ່ງ
ຍັງມີຊີວິດຢູ່ແລະບາງທ່ານກໍດໍາລົງຊີວິດກະແຈກກະຈາຍຢູ່ທົ່ວທະວີບ.

ອີກປະການນຶ່ງ ວີດີໂອທີ່ຂ້າພະເຈົ້າປະດິດຂຶ້ນເພື່ອປະກອບບົດເພງທັງໝົດ
ໂດຍອາສັຍເຄື່ອງດົນຕຣີສາກົນຕົ້ນຕໍຊຶ່ງຮຽກວ່າ "ອໍແກນອັຕໂນມັດ" (Arranger
Keyboard / Clavier Arrangeur) ເສບບັນເລງ ແມ່ນເປັນພຽງແບບຢ່າງ
ໃຫ້ສຶກສາຄົ້ນຄວ້າຕໍ່ໄປ ບໍ່ໃຫ້ຖືເອົາເປັນຫຼັກຕາຍຕົວໃນການຢັ້ງຢືນຂອງບົດເພງ.

ສຸດທ້າຍ ຂໍຂອບໃຈແລະຂໍສະແດງຄວາມຮູ້ບຸນຄຸນບັນດາຄູບາອາຈານ ນັກປະພັນ
ແລະນັກສິລປິນລາວຮຸ່ນອາວຸໂສທຸກໆທ່ານ ທີ່ໄດ້ສ້າງຜົນງານ ບົດເພງຕ່າງໆ
ໄວ້ໃຫ້ປວງຊົນໄດ້ຊື່ນຊົມແລະຄົ້ນຄວ້າສຶກສາຮໍ່າຮຽນສືບຕໍ່ໃຫ້ຍືນຍາວຕລອດການນານ.

ດ້ວຍຄວາມຮັກແພງ
ພົງສມອນ ດາວົງສ໌
Paris, ວັນທີ່ 24/06/2016



## ສາລະບານ ດົນຕຣີບັນເລງເພງລາວອະມະຕະ
## ພ້ອມໂນຕສາກົນ ແລະເນື້ອຮ້ອງ
## ເລີ່ມຕົ້ນຮິບໂຮມແລະເຜີຍແຜ່ : ວັນທີ່ 24/06/2016

“

ມີຄວາມຮູ້ ແຕ່ຖ້າຂາດ

ຈິນຕະນາການ ກໍໄຮ້ຄຸນຄ່າ...

”

# ຫວັ່ນໃຈ

ເນື້ອຮ້ອງ & ທຳນອງ : ພິມມະ ພິມມະສອນ
ນັກຮ້ອງຕົ້ນສະບັບ : ສົມຟອງ ຊິງມີໄຊ
ສະບັບສຽງຂັບຮ້ອງຂອງ : ມະລິຈັນສຸກ ເທບສຸວັນ (1999)

Slow Rock 1970

(♩ = 70)

Em E7 G C Am B7 Em Am B7

(Intro) ____

**A**

Em Em Am G C B7

ຫວັ່ນ ຈິດ ຫວັ່ນ ໃຈ ຫວັ່ນອ້າຍ ມີ ໃໝ່ ນ້ອງເຝົ້າ ຣະ ແວງ ສົງ ສັຍ ຫວັ່ນດວງ ໃຈ ນ້ອງ ຈະ ຜິດ ຫວັງ ທຸກ ໆ ນາ

Em E7 Am F#7 B7 C B7

ທີ ນ້ອງ ນີ້ ເຝົ້າ ຄອຍ ຣະ ວັງ ເກງ ອ້າຍ ຈະ ຫ່າງ ຈະ ຮ້າງ ເກງ ອ້າຍ ຈະ ຊັງ ແໜງ ໜ່າຍ...

**B**

Em Am G C B7

ຄ່ຳ ຄືນ ຊຸ່ມ ຄິດ ຈິດ ນ້ອງຈຽນ ປ່ວງ ທຸກ ອັນນ້ອງໄດ້ ແຕ່ ຫວງ ຫ່ວງ ວ່າ ອ້າຍ ນັ້ນ ຈະ ຫຼຸດ ໄປ ເພາະເຫັນຍິງ

Em E7 Am F#7 B7 Em Am B7

ອື່ນ ເພື່ອນນ້ອງ ນັ້ນ ເຂົາ ສົນ ໃຈ ເກງ ອ້າຍ ຈະ ຫວັ່ນ ຈະ ໄຫວ ປ່ຽນ ໃຈ ໄປ ເສັຽ ຈາກ ນ້ອງ...

**C**

Em E7 Am F#7 B7 G B7

ຢ່າ ເລີຍ ຢ່າ ມີ ຫຼາຍ_ ໃຈ ຖ້າ ອ້າຍ ຈະ ຮັກ ຍິງ ໃໝ່ ໂປຣດ ຕັດ ໃຈ ໄປ ເສັຽ ຈາກ ນ້ອງ ນ້ອງເອງ ຍິນ

Em E7 Am F#7 B7 Am B7

ດີ ເສັຽ ສ ລະ ທັ້ງ ນ້ຳ ຕາ ນອງ ເຖິງ ແມ່ນ ດວງ ຈິດ ຈະ ໝອງ ໝົ່ນ ໝອງ ນ້ອງ ຈະ ທົນ...

**D**

Em Am G C Em B7

ຫາກ ຍັງ ຮັກ ນ້ອງ ຢ່າ ຄິດ ມີ ໃໝ່ ຮັກດຽວ ຂໍ ຢ່າ ທຳ ລາຍ ຢ່າ ທຳ ໃຈ ເພື່ອນ ຍິງ ໝອງ ໝົ່ນ ນ້ອງ ຂໍ ວິງ

Em E7 Am F#7 To Coda 1. B7 Em Am B7

ວອນ ເທບ ໄທ້ ນັ້ນ ຈົ່ງ ຊ່ອຍ ດົນ ວອນ ອ້າຍ ຈົ່ງ ຢ່າ ເປັນ ໂຈນ ຫຼອ ປົ້ນ ໃຈ ລູກ ຜູ້ ຍິງ...

(Solo verse B)

Coda

**E**

2. B7 *ritardando...* Em Am B7 Am Em B7 Em Em9

ໂຈນ... ຫຼອ ປົ້ນ ໃຈ ລູກ ຜູ້ ຍິງ...

(Coda) ____

Fine

# ຫລົ່ນໃຈ

Key : Em
Slow Rock

ເນື້ອຮ້ອງ & ທຳນອງ : ພິມມະ ພິມມະສອນ
ນັກຮ້ອງຕົ້ນສະບັບ : ສົມພອງ ຊົງມີໄຊ
ສະບັບສຽງຂັບຮ້ອງຂອງ : ມະລິຈັນສຸກ ເທບສຸວັນ (1999)

1970

1) ຫລົ່ນຈິດຫລົ່ນໃຈ ຫລົ່ນອ້າຍມີໃໝ່
ນ້ອງເຝົ້າຣະແວງສິ່ງສັຍ ຫລົ່ນດວງໃຈນ້ອງຈະຜິດຫວັງ
ທຸກໆນາທີ ນ້ອງນີ້ເຝົ້າຄອຍຣະວັງ
ເກງອ້າຍຈະຫ່າງຈະຮ້າງ ເກງອ້າຍຈະຊັງແໜງໜ່າຍ...

2) ຄ່ຳຄືນຂຸ່ນຄິດ ຈິດນ້ອງຈຽນປ່ອງ
ທຸກວັນນ້ອງໄດ້ແຕ່ຫວງ ຫ່ວງວ່າອ້າຍນັ້ນຈະຫຼູດໄປ
ເພາະເຫັນຍິງອື່ນ ເພື່ອນນ້ອງນັ້ນເຂົາສົນໃຈ
ເກງອ້າຍຈະຫລົ່ນຈະໄຫວ ປ່ຽນໃຈໄປເສັຽຈາກນ້ອງ...

• ຢ່າເລີຍ... ຢ່າມີຫຼາຍໃຈ
ຖ້າອ້າຍຈະຮັກຍິງໃໝ່ ໂປຣດຕັດໃຈໄປເສັຽຈາກນ້ອງ
ນ້ອງເອງຍິນດີ ເສັຽສລະທັ້ງນ້ຳຕານອງ
ເຖິງແມ່ນດວງຈິດຈະໝອງ ໝົ່ນໝອງນ້ອງຈະທົນ...

3) ຫາກຍັງຮັກນ້ອງ ຢ່າຄິດມີໃໝ່
ຮັກດຽວຂໍຢ່າທຳລາຍ ຢ່າທຳໃຈເພື່ອນຍິງໝອງໝົ່ນ
ນ້ອງຂໍວິງວອນ ເທບໄທ້ນັ້ນຈົ່ງຊ່ວຍດົນ
ວອນອ້າຍຈົ່ງຢ່າເປັນໂຈນ ຫຽວປົ້ນໃຈລູກຜູ້ຍິງ...

# ບໍ່ຫວັ່ນ

ເນື້ອຮ້ອງ & ທຳນອງ : ພິມມະ ພິມມະສອນ
ນັກຮ້ອງຕົ້ນສະບັບ : ທັນຕະວັນ ຣາຊາສັກດ໌
ສະບັບສຽງຂັບຮ້ອງຂອງ : ມະລິຈັນສຸກ ເທບສຸວັນ (1999)

Slow Waltz
(♩ = 78)
1970

Eb Ebmaj7 Cm Bb7 Fm Bb7 Eb Bb7
*mp*
(Intro) ——— ຫາກ ເສັ້ນ ທາງ

**A**
1
Eb Gm Eb Gm Eb Cm Fm Bb7
ນັ້ນ ທີ່ ຊາຍເລືອກ ເດີນ ເຫັນມັນ ສ ວ່າງ____ ຈະ ໃຫ້ຄວາມ ຫວັງ ໃຫ້ຄວາມພິ ຣົມ ສຸກ ສົມ ຣື ທັຍ____ ຈະ ຊ່ວຍ ບັນ

9
F7 G7 Cm Ab Eb Cm F7 Bb7
ດານ ໃຫ້ ຊີ ວິດ ອ້າຍ ເຮືອງ ຮຸ່ງ ສົດ ໃສ____ ຈຶ່ງ ເດີນກ້າວ ໄປ ສູ່ ສິ່ງ ວິ ໄລ ທີ່ ໃຈຮຽກ ຮ້ອງ...____ ນ້ອງຈະ ບໍ່

**B**
17
Eb Gm Eb Gm Eb Cm Fm Bb7
ງໍ້ ຂໍ ຄວາມເຫັນ ໃຈ ໃຫ້ ມັນ ໄຮ້ ຄ່າ____ ຈະ ບໍ່ ຍອມ ເສັຽ ແມ່ນພຽງ ນ້ຳ ຕາ ໃຫ້ ມັນ ໄຫຼ ນອງ____ ຈະ ສິ້ນ ຊີ

25
F7 G7 Cm Ab Eb Bb7 Eb
ວິ ດ້ອຍ ວ່າ ຂາດ ອ້າຍ ມາ ຄູ່ ຄຽງ ຄອງ____ ເຈັບ ຊ້ຳ ຣື ທັຍ ໃຈເປື່ອຍ ເປັນ ໜອງ ບໍ່ ຂໍ ຮ້ອງ ໄຫ້...____ ຈຶ່ງ ຈາກໄປ

**C**
33
Fm Bb Eb Gm Cm Ab F7 Bb
ດີ ແມ່ນ ມີ ຮັກ ໃໝ່ ຂໍ ໃຫ້ໜຽວ ໝັ້ນ____ ຮ່ວມ ສຸກ ຮ່ວມ ທຸກ ຄູ່ - ກັນ ຜອງ ເທົ່າ ວັນ ຕາຍ____ ຖ້າ ຫາກ ເຂົາ

41
Eb Gm Bb Cm Abmaj7 F7 Bb7
ດີ ເຂົາ - ມີ ຄວາມຮັກ ຈິງ ໃຈ____ ຈຶ່ງ ຮີບ ຈາກ ໄປ ມອບ ໃຈ ໃຫ້ ເຂົາ ເສັຽ - ທີ...____ ຫາກສິ້ນ ຄືນ

**D**
49
Eb Gm Eb Gm Eb Cm Fm Bb7
ຮັກ ສິ້ນ ຄືນ ເມດ ຕາ ໄຮ້ ຍິງ ຝັນ ໃຝ່____ ໝົດ ທາງ ຈະ ໄປ ທືອ ໃຈ ຣະ ກຳ ເຈັບ ຊ້ຳ ຣື ດີ____ ຈຶ່ງ ໄດ້ ກັບ

57
F7 G7 Cm Ab Eb Bb Eb Bb7
To Coda 1.
ມາ ກັບ ມາ ຫາ ນ້ອງ ເຖີດ ຍອດ ຊີ ວິ____ ບາງ ທີ ນ້ອງ ອາດ ອາດ ໃຫ້ ອະ ພັຍ ຫາກ ໃຈຫວ່າງ ພໍ...____
(Solo verse B)

**E**
Coda
65
Eb Gm Ab Fm Bb Eb Ab Abm Ebmaj7
2.
ພໍ... (Coda) ———
Fine

# ບໍ່ຫວັ່ນ

Key : Eb
Slow Waltz

ເນື້ອຮ້ອງ & ທຳນອງ : ພິມມະ ພິມມະສອນ
ນັກຮ້ອງຕົ້ນສະບັບ : ທັນຕະວັນ ຣາຊາສັກດ໌
ສະບັບສຽງຂັບຮ້ອງຂອງ : ມະລິຈັນສຸກ ເທບສຸວັນ (1999)

1970

1) ຫາກເສັ້ນທາງນັ້ນ ທີ່ຊາຍເລືອກເດີນ ເຫັນມັນສວ່າງ
ຈະໃຫ້ຄວາມຫວັງ ໃຫ້ຄວາມພິຣົມ ສຸກສົມຣິທັຍ
ຈະຊ່ວຍບັນດານ ໃຫ້ຊີວິດອ້າຍ ເຮືອງຮຸ່ງສົດໃສ
ຈຶ່ງເດີນກ້າວໄປ ສູ່ສິ່ງວິໄລ ທີ່ໃຈຮຽກຮ້ອງ...

2) ນ້ອງຈະບໍ່ງໍ້ ຂໍຄວາມເຫັນໃຈ ໃຫ້ມັນໄຮ້ຄ່າ
ຈະບໍ່ຍອມເສັຽ ແມ່ນພຽງນ້ຳຕາ ໃຫ້ມັນໄຫຼນອງ
ຈະສິ້ນຊີວິ ດ້ອຍວ່າຂາດອ້າຍ ມາຄູ່ຄຽງຄອງ
ເຈັບຊ້ຳຣິທັຍ ໃຈເປື່ອຍເປັນໜອງ ບໍ່ຂໍຮ້ອງໄຫ້...

• ຈຶ່ງຈາກໄປດີ ແມ່ນມີຮັກໃໝ່ ຂໍໃຫ້ໝຽວໝັ້ນ
ຮ່ວມສຸກຮ່ວມທຸກ ຄູ່ກັນ ຜອງເທົ່າວັນຕາຍ
ຖ້າຫາກເຂົາດີ ເຂົາມີຄວາມຮັກ ຈິງໃຈ
ຈຶ່ງຮີບຈາກໄປ ມອບໃຈໃຫ້ເຂົາ ເສັຽທີ...

3) ຫາກສິ້ນຄືນຮັກ ສິ້ນຄືນເມດຕາ ໄຮ້ຍິງຝັນໃຝ່
ໝົດທາງຈະໄປ ຫົວໃຈຣະກຳ ເຈັບຊ້ຳຣິດີ
ຈຶ່ງໄດ້ກັບມາ ກັບມາຫານ້ອງ ເຖີດຍອດຊີວີ
ບາງທີນ້ອງອາດ ອາດໃຫ້ອະພັຍ ຫາກໃຈຫວ່າງພໍ...

# ສຸກສັນວັນປີໃໝ່

ເນື້ອຮ້ອງ & ທຳນອງ : ພິມມະ ພິມມະສອນ
ນັກຮ້ອງຕົ້ນສະບັບ : ພິມມະ ພິມມະສອນ

Lamvong Lao 1966

(♩= 130)

C G7 C G C

(Trompet) ________ ວັນ

A

C Am

1 ນີ້ ວັນ ດີ ປີ ໃໝ່ ເຮົາ ມາ ອວຍ ຊັຍ - ໃຫ້ ສຸກ ສຳ ຣານ ຊ່ວຍ ສ້າງ ແດນ ນີ້ ໃຫ້ ເປັນ ແດນ ສ ວັນ-

C Am C G C

6 - ຊ່ວຍ ສ້າງ ແດນ ນີ້ ໃຫ້ ເປັນ ແດນ ສ ວັນ - ມາ ຟ້ອນ ລຳ ກັນ - ສ ລອງ ວັນ ປີ ໃໝ່... ຄວາມ

B

C Am

11 ທຸກ ທີ່ ເຄີຍ ປຣະ ສົບ ຈົ່ງ ຢ່າ ໄດ້ ພົບ - ພານ ອີກ ຕໍ່ ໄປ ໝົດ ສິ້ນ ໄປ ເສັຽ ສິ່ງ ທີ່ ເສົ້າ ໝອງ -

C Am C G C

16 ໃຈ ໝົດ ສິ້ນ ໄປ ເສັຽ ສິ່ງ ທີ່ ເສົ້າ ໝອງ - ໃຈ ຄວາມ ສີ ວິ ໄລ - ຈົ່ງ ໄດ້ ມາ ແທນ ທີ່... ເຮ

C

F C Dm

21 ຮາ ຫົວ ຍິ້ມ ເພື່ອນ ເອີຍ ຢ່າ ໂສກ ໄປ ເລີຍ ຄັ້ງ ດຽວ ນຶ່ງ ປີ ວັນ ນີ້ ໂຊກ ງາມ ຍາມ

G C

26 ດີ ວັນ ນີ້ ໂຊກ ງາມ ຍາມ ດີ ເຮົາ ມາ ສ ວັສ ດີ - ສ ວັສ ດີ ປີ ໃໝ່... ຫາກ

D

C Am

31 ໃຜ ເຈັບ ຊ້ຳ ຂົມ ຂື່ນ ກໍ ຈົ່ງ ຄາຍ ຄືນ - ຊື່ນ ສຸກ ຕໍ່ ໄປ ຫາກ ໃຜ ສຸກ ແລ້ວ ກໍ ຢ່າ ແຄ້ວ ຄາດ -

C Am C G C

36 ໄປ ຫາກ ໃຜ ສຸກ ແລ້ວ ກໍ ຢ່າ ແຄ້ວ ຄາດ - ໄປ ເຮົາ ຂໍ ອວຍ ຊັຍ - ໃຫ້ ທຸກ ທ່ານ ໂຊກ ດີ...

To Coda 1. (Solo verse B)

E

Coda 2.

C G C G C G C

41 ດີ... (Coda) ________ Fine

# ສຸກສັນວັນປີໃໝ່

Key : C
Lamvong Lao

ເນື້ອຮ້ອງ & ທຳນອງ : ພິມມະ ພິມມະສອນ
ນັກຮ້ອງຕົ້ນສະບັບ : ພິມມະ ພິມມະສອນ

1966

1) ວັນນີ້ ວັນດີປີໃໝ່
ເຮົາມາອວຍຊັຍ ໃຫ້ສຸກສຳຣານ
ຊ່ວຍສ້າງແດນນີ້ ໃຫ້ເປັນແດນສວັນ (ຊ້ຳ)
ມາຟ້ອນລຳກັນ ສລອງວັນປີໃໝ່...

2) ຄວາມທຸກ ທີ່ເຄີຍປຣະສົບ
ຈົ່ງຢ່າໄດ້ພົບ ພານອີກຕໍ່ໄປ
ໝົດສິ້ນໄປເສັຽ ສິ່ງທີ່ເສົ້າໝອງໃຈ (ຊ້ຳ)
ຄວາມສີວິໄລ ຈົ່ງໄດ້ມາແທນທີ່...

• ເຮຣາ ຫົວຍິ້ມ ເພື່ອນເອີຍ
ຢ່າໂສກໄປເລີຍ ຄັ້ງດຽວນີ່ງປີ
ວັນນີ້ ໂຊກງາມຍາມດີ (ຊ້ຳ)
ເຮົາມາສວັສດີ ສວັສດີປີໃໝ່...

3) ຫາກໃຜ ເຈັບຊ້ຳຂົມຂື່ນ
ກໍຈົ່ງຄາຍຄືນ ຊື່ນສຸກຕໍ່ໄປ
ຫາກໃຜສຸກແລ້ວ ກໍຢ່າແຄ້ວຄາດໄປ (ຊ້ຳ)
ເຮົາຂໍອວຍຊັຍ ໃຫ້ທຸກທ່ານໂຊກດີ...

# ຜູ້ຍິງຜູ້ຍິງ

ເນື້ອຮ້ອງ & ທຳນອງ : ພິມມະ ພິມມະສອນ

ນັກຮ້ອງຕົ້ນສະບັບ : ພິມມະ ພິມມະສອນ

Slow (♩ = 64) 1970

Bbm F Bbm F Bbm Gb Ebm Gb

(Intro)

**A**

F Bbm Ab Gb Ebm F

ຜູ້ ຍິງ ຜູ້ ຍິງ ເກີດມາເຮັດ ຫຍັງ ເກີດ ມາ ອີກ ທາງ ອີກ ໂລກ ແຈ່ມ ໃສ

Bbm Db Ebm Gb F Bbm Ebm C7

ເກີດ ມາ ເພື່ອ ສ້າງ ຄວາມແຄ້ນ ປະ ທັບ ໄວ້ ກາງ ແກ່ນ ໃຈ ແດ່ ພວກ ຜູ້ ຊາຍ ຫຼາຍ - ໜ້າ

**B**

F Bbm Ab Gb Ebm F

ຜູ້ ຍິງ ຜູ້ ຍິງ ເກີດມາເຮັດ ຫຍັງ ເກີດ ມາ ຫາ ທາງ ໃຊ້ ເລ່ ມານ ຍາ

Bbm Db Ebm Gb F Bbm F7 Bbm Ebm F

ຜູ້ ຊາຍຕ້ອງ ສິ້ນ ລາຍ ສິງ ພ່າຍແພ້ ຜູ້ ຍິງ ຕລອດມາ ໝອບ ແທບ ບາ ທາ ທຸກ ລາຍ

**C**

Bbm Bb Ebm C7 F C7 F

ຜູ້ - ຍິງ ຜູ້ ຍິງ ຍິງ ມີ ທຸກ ສິ່ງ ເຍົ້າ ໃຈ

Bb7 Ebm Eb C7

ແຕ່ ສິ່ງ ເຫຼົ່າ ນັ້ນ ກໍ ລ້ວນ ເພິງ ໄຟ ເຫພ ເຈົ້າ ອົງ ໃດ ເສກ ສັນ ຍິງ ມາ

**D**

F Bbm Ab Gb Ebm F

ຜູ້ ຍິງ ຜູ້ ຍິງ ເກີດມາເຮັດ ຫຍັງ ເກີດ ມາ ອີກ ທາງ ອີກ ແຜ່ນ ສຸ ທາ

Bbm Db Ebm Gb F Bbm F7 Bbm Ebm F

ຫາກຍາມ ໃດ ສິ້ນ ຜູ້ ຍິງ ສາບ ສູນ ແມ່ ຍິງ ມານ ຍາ ໂລກ ຄົງ ສຸ ຂາ ເສັຽ - ທີ...

To Coda 1.

(Solo verse C)

**E**

Coda 𝄌

Bbm Gb F Bbm

2.

ທີ... (Coda)

Fine

# ຜູ່ຍິງຜູ່ຍິງ

Key : Bbm
Slow

ເນື້ອຮ້ອງ & ທຳນອງ : ພິມມະ ພິມມະສອນ
ນັກຮ້ອງຕົ້ນສະບັບ : ພິມມະ ພິມມະສອນ

1970

1) ຜູ່ຍິງຜູ່ຍິງ ເກີດມາເຮັດຫຍັງ
ເກີດມາອີກທາງ ອີກໂລກແຈ່ມໃສ
ເກີດມາເພື່ອສ້າງ ຄວາມແຄ້ນ
ປະທັບໄວ້ກາງ ແກ່ນໃຈ
ແດ່ພວກຜູ່ຊາຍ ຫຼາຍໜ້າ

2) ຜູ່ຍິງຜູ່ຍິງ ເກີດມາເຮັດຫຍັງ
ເກີດມາຫາທາງ ໃຊ້ເລ່ມານຍາ
ຜູ່ຊາຍຕ້ອງສິ້ນ ລາຍສິງ
ພ່າຍແພ້ຜູ່ຍິງ ຕລອດມາ
ໝອບແທບບາທາ ທຸກລາຍ

• ຜູ່ຍິງຜູ່ຍິງ ຍິງມີທຸກສິ່ງເຍົ້າໃຈ
ແຕ່ສິ່ງເຫຼົ່ານັ້ນ ກໍລ້ອນເພີງໄຟ
ເທພເຈົ້າອົງໃດ ເສກສັນຍິງມາ

3) ຜູ່ຍິງຜູ່ຍິງ ເກີດມາເຮັດຫຍັງ
ເກີດມາອີກທາງ ອີກແຜ່ນສຸທາ
ຫາກຍາມໃດສິ້ນ ຜູ່ຍິງ
ສາບສູນແມ່ຍິງ ມານຍາ
ໂລກຄົງສຸຂາ ເສັຽທີ...

# ນົກເຂົາລືມຄອນ

ເນື້ອຮ້ອງ & ທຳນອງ : ບຸນທັນ ສີພຣິທົມໄຊຍ໌

ນັກຮ້ອງຕົ້ນສະບັບ : ກ. ວິເສດ

1969




Hawaiian Guitar Saxo ____________________ Hawaiian Guitar Saxo ____________________




ນົກ ເອີຍ ນົກ ເຂົາ ຂອງ ເຮົາ ເກົ່າ ກ່ອນ ເຈົ້າ ພາກ ຈາກ ຄອນ ຫຼົງ ຄູ່ ໄປ ຢູ່ ແຫ່ງ ໃດ




ເຈົ້າ ຖືກ ລໍ້ ລວງ ຕິດ ບ້ວງພານ ຫຼື ຜູກ ສັມ ພັນ ຄອງ ຄູ່ ໃໝ່ ຈຶ່ງ ຫຼົງ ລືມ ໄລ ບ່ອນເຄີຍ ສຸຂ ສັນ...




ນ້ອງ ເອີຍ ນ້ອງ ນາງ ເຄີຍ ຄຽງ ຂ້າງ ຢູ່ ກ່ອນ ເຄີຍ ຊື່ນ ຊູ ພົບ ຄູ່ ໃໝ່ ປ່ຽນ ແປ ຜັນ




ເຈົ້າ ລືມ ຣົດ ຮັກ ທີ່ ດື່ມ ດ່ຳ ເຈົ້າ ລືມ ນ້ຳ ຄຳ ເຄີຍ ຍຶດ ໝັ້ນ ຮ່ວມ ອະ ທິ ຖານ ຮັກ ກັນ ຈົນ ຕາຍ...




ຖິ່ນ ກ່ອນຄອນ ເກົ່າ ທີ່ ເຈົ້າ ເຄີຍ ນອນ ເຫຼືອເປັນ ອະ ນຸ ສອນ ແຫ່ງຄວາມ ຫຼັງ ເຕືອນ ໃຈ




ເຫັນ ຊາກໝອນຮ້າງ ທີ່ ນາງ ໜຸນ ຫອມ ກິ່ນ ເນື້ອ ອຸ່ນ ຍັງ ຈຳ ໄດ້ ເຄີຍ ຈູບ ລູບ ໄລ້ ນອນ ນາງ




ນ້ອງ ເອີຍ ນ້ອງ ນ້ອຍ ຂ້າ ຄອຍ ເຈົ້າ ຢູ່ ກັບ ເຖິດ ຍອດ ຊູ້ ຂ້າ ຢູ່ ໂດດ ດ່ຽວ ອ້າງ ຫວ້າງ




ແມ່ນເຈົ້າ ຫຼົງ ເດີນທາງ ຜິດ ໄປ ຈຶ່ງ ຫັກ ຫືອ ໃຈ ເດົ້ ນ້ອງນາງ ຖິ່ນ ກ່ອນຄອນ ຫຼັງ ຍັງ ຄອງ ຍັງ ຄອຍ...



# ນົກເຂົາລືມຄອນ

Key : Eb
Slow

ເນື້ອຮ້ອງ & ທຳນອງ : ບຸນທັນ ສູິພຣິທົນໄຊຍ໌
ນັກຮ້ອງຕົ້ນສະບັບ : ກ. ວິເສດ

1969

1) ນົກເອີຍນົກເຂົາ ຂອງເຮົາເກົ່າກ່ອນ
ເຈົ້າພາກຈາກຄອນ ຫຼົງຄູ່ໄປຢູ່ແຫ່ງໃດ
ເຈົ້າຖືກລໍ້ລວງຕິດບ້ວງພານ ຫຼືຜູກສັມພັນຄອງຄູ່ໃໝ່
ຈຶ່ງຫຼົງລືມໄລ ບ່ອນເຄີຍສຸກສັນ

2) ນ້ອງເອີຍນ້ອງນາງ ເຄີຍຄຽງຂ້າງຢູ່
ກ່ອນເຄີຍຊື່ນຊູ ພົບຄູ່ໃໝ່ປ່ຽນແປຜັນ
ເຈົ້າລືມຣົດຮັກທີ່ດື່ມດ່ຳ ເຈົ້າລືມນ້ຳຄຳເຄີຍຍຶດໝັ້ນ
ຮ່ວມອະທິຖານ ຮັກກັນຈົນຕາຍ

• ຖິ່ນກ່ອນຄອນເກົ່າ ທີ່ເຈົ້າເຄີຍນອນ
ເຫຼືອເປັນອະນຸສອນ ແຫ່ງຄວາມຫຼັງເຕືອນໃຈ
ເຫັນຊາກໝອນຮ້າງທີ່ນາງໜຸນ ຫອມກິ່ນເນື້ອອຸ່ນຍັງຈຳໄດ້
ເຄີຍຈູບລູບໄລ້ ນອນນາງ

3) ນ້ອງເອີຍນ້ອງນ້ອຍ ຂ້າຄອຍເຈົ້າຢູ່
ກັບເຖິດຍອດຊູ້ ຂ້າຢູ່ໂດດດ່ຽວອ້າງຫວ້າງ
ແມ່ນເຈົ້າຫຼົງເດີນທາງຜິດໄປ ຈຶ່ງຫັກຫົວໃຈເດີ້ນ້ອງນາງ
ຖິ່ນກ່ອນຄອນຫຼັງ ຍັງຄອງຍັງຄອຍ...

# ນົກເຂົາຄືນຮັງ

ເນື້ອຮ້ອງ & ທຳນອງ : ບຸນທັນ ສີພຣິຫົມໄຊຍ໌
ນັກຮ້ອງຕົ້ນສະບັບ : ຈັນທອນ ປັນຈະພາຣິນຍ໌

2017

Slow ♩ = 60

Bb Gm F Eb F

Intro (Ad Lib)

**A**

1 Bb Gm F Bb Bb7 Eb Cm

1) ນົກ ເອີຍ ນົກ ເຂົາ ເຄີຍ ເນົາ ຄຽງ ຄູ່ ແຂ່ງ ກັນ ຂັນ ຄູ ມ່ວງ ສູ່ ແຜ່ນ ດິນ ຖິ່ນ ໄກ
2) ນົກ ນ້ອຍ ພາກ ຮັງ ລຳ ພັງ ໂດດ ດ່ຽວ ຂາດ ຄູ່ ແລ ຫຼຽວ ໂບ້ນ ໜ່ຽວ ຈິດ ໃຈ ອ່ອຍ ຄືນ
3) ຟ້າ ຮ້ອງ ຝົນ ຮຳ ຍາມ ເມື່ອ ເດືອນ ຫົກ ອຸ່ນ ອາຍ ອ້ອມ ອົກ ທີ່ ກົກ ກະ ເດົາ ຄາວ ນັ້ນ

5 Eb Gm Bb D7 — To Coda — 1. Gm Cm F Eb Ebm

ຝັນ ສ້າງ ວິ ມານ ອັນ ຮື່ນ ຮົມ ຕາມ ຄຳ ນິ ຍົມ ສັງ ຄົມ ໃໝ່ — ແຕ່ ຝັນ ມະ ລາຍ ກັບ ກາຍ ເປັນ ອື່ນ...
ບິນ ເວີ່ນ ເຫີນ ລອຍ ເລີຍ ຫຼີງ ທາງ ຕົກ ຫຼົ່ມ ຂຸມ ພາງ ພາ ຂົມ ຂື່ນ
ສຽງ ສັ່ງ ຍັງ ຄິງ ສະ ກິດ ເຕືອນ ນິ ອາດ ລືບ ເລືອນ ລືມ ຄຳ ໝັ້ນ

9 2. Gm F Bb Eb Ebm

ປີກ ຫັກ ຈຳ ຝືນ ສູ້ ບິນ ຟັນ ຝ່າ...

**B**

11 Bb F Eb Bb Ab F D F D

ເຣື່ອງ ເກົ່າ ຂ່າວ ລື ໂລກ ຄື ລະ ຄອນ ຖື ເປັນ ອຸ ທາ ຫອນ ບົດ ຮຽນ ສອນ ມານ ຍາ

15 F Gm Eb C F D F

ຮັກ ໃໝ່ ລອງ ລໍ້ ໃຫ້ ລຸ່ມ ຫຼົງ ຮັກ ເກົ່າ ໝັ້ນ ຄົງ ນິ ຣາ ຄາ ຄອນ ຄ່າ ຣະ ລຶກ ນົກ ເຖິງ - ກັນ...

19 ⊕ Coda Gm F Bb Eb Ebm

ສີ່ ເພງ ກ່ອນ ຂວັນ ນົກ ເຂົາ - ຄືນ ຮັງ...

(Solo 2nd verse)
D.C. al Fine

**C**

21 Gm Bb D7 Gm F Bb Eb Ebm

ສຽງ ສັ່ງ ຍັງ ຄິງ ສະ ກິດ ເຕືອນ ນິ ອາດ ລືບ ເລືອນ ລືມ ຄຳ ໝັ້ນ ສູ່ ເພງ ກ່ອນ ຂວັນ ນົກ ເຂົາ - ຄືນ ຮັງ...

25 Bb F Gm F Bb

Coda (Ad Lib)

Fine

# ນົກເຂົາຄືນຮັງ

Key : Bb
Slow

ເນື້ອຮ້ອງ & ທຳນອງ : ບຸນທັນ ສູົພຣິທົມໄຊຍ໌
ນັກຮ້ອງຕົ້ນສະບັບ : ຈັນທອນ ປັນຈະພາຣິນຍ໌

2017

1) ນົກເອີຍນົກເຂົາ ເຄີຍເນົາຄຽງຄູ່
ແຂ່ງກັນຂັນຄູ ມຸ່ງສູ່ແຜ່ນດິນຖິ່ນໄກ
ຝັນສ້າງວິມານອັນຮົ່ມຣິນ ຕາມຄຳນິຍົມສັງຄົມໃໝ່
ແຕ່ຝັນມະລາຍ ກັບກາຍເປັນອື່ນ...

2) ນົກນ້ອຍພາກຮັງ ລຳພັງໂດດດ່ຽວ
ຂາດຄູ່ແລຫຼຽວ ໂນ້ມໝ່ຽວຈິດໃຈອ່ອຍຄືນ
ບິນເວີ່ນເຫີນລອຍເລີຍຫຼົງທາງ ຕົກຫຼົ່ມຂຸມພາງພາຂົມຂື່ນ
ປົກຫັກຈຳຝືນ ສູ້ບິນຟັນຝ່າ...

• ເຣື່ອງເກົ່າຂ່າວລື ໂລກຄືລະຄອນ
ຖືເປັນອຸທາຫອນ ບົດຮຽນສອນມານຍາ
ຮັກໃໝ່ລອງລໍ້ໃຫ້ລຸ່ມຫຼົງ ຮັກເກົ່າໝັ້ນຄົງມີຣາຄາ
ຄອນຄ່າຣະລຶກ ນົກເຖິງກັນ...

3) ຟ້າຮ້ອງຝົນຮໍາ ຍາມເມື່ອເດືອນຫົກ
ອຸ່ນອາຍອ້ອມອົກ ທີ່ກົກກະເດົາຄາວນັ້ນ
ສຽງສັ່ງຍັງຄົງສະກິດເຕືອນ ມິອາດລົບເລືອນລືມຄຳໝັ້ນ
ສີເພງກ່ອມຂວັນ ນົກເຂົາຄືນຮັງ...

* ເມກສວ່າງຝົນຊາຟ້າເລີ່ມສາງ ສອາດມີອາງຍັງຈຳໝັ້ນ
ຫັກໃຈກັບຫັນ ຫອນຄືນຮັງເກົ່າ...

# ພອນວັນເກີດ

ເນື້ອຮ້ອງ & ທຳນອງ : ຄຳຫລ້າ ໜໍ່ແກ້ວ
ນັກຮ້ອງຕົ້ນສະບັບ : ບຸນທ່ຽງ ມະນີວົງສ໌

Slow Bolero (♩ = 85) 1969

Ab Eb Ab Eb Db Eb Ab

(Intro)

**A**

Ab Bbm Cm Fm
ທ່ານ ເກີດ ວັນ ນີ້ ຂໍ ຈົ່ງ ມີ ຣາ ສີ ໃສ ສ່ອງ ຢ່າ ໝົ່ນ

Ab F Bbm Eb Ab
ໝອງ ໃຫ້ ຄອງ ສຸກ ຕ ລອດ ຊີ ວີ ອັນ ໂຣ ຄາ ໂພຍ

Ab7 Db Fm Eb Ab
ພັຍ ຢ່າ ໄດ້ ມີ ຈົ່ງ ສຸ ຂີ ສຸ ຂີ ສົມ ປຣາ ຖ ນາ

**B**

Cm Eb Fm
ມະ ໂນ ນຶກ ສິ່ງ ໃດ ໃນ ໂລກ ນີ້ ຈົ່ງ ໄດ້

Bbm Eb Ab Ab7 Db
ມີ ສົມ ພອນ ທີ່ ອອນ ວ່າ ກຽດ ຕິ ຍົດ ຊື່

Fm Gb Eb Db Ab Fm Eb Ab
ສຽງ ກ້ອງ ໂລ ກາ ເຮືອງ ອຳ ນາດ ວາ ສ ນາ ໄຫຼ ມາ ກອງ

**C**

Eb Ab Bbm Cm Fm
ທ່ານ ເກີດ ວັນ ນີ້ ເປັນ ວັນ ດີ ອະ ມຸດ ຕະ ໂຊກ ຢ່າ ມີ

Ab F Bbm Eb Ab
ທຸກ ແລະ ມີ ໂສກ ເສົ້າ ໝົ່ນ ໝອງ ອັນ ເງິນ ຄຳ ມາກ

Ab7 Db Fm Gb Eb Ab
ມາຍ ຫຼາຍ ກ່າຍ ກອງ ຢ່າ ມີ ມາຣ ໄຕ່ ຕ້ອງ ຕ ລອດ ການ...

1. (Solo verse A)

Coda

**D**

Ab Eb Ab Eb Db Eb Ab
2. ການ... (Coda)

Fine

# ພອນວັນເກີດ

Key : Ab
Slow Bolero

ເນື້ອຮ້ອງ & ທຳນອງ : ຄຳຫຼ້າ ໜໍ່ແກ້ວ
ນັກຮ້ອງຕົ້ນສະບັບ : ບຸນທ່ຽງ ມະນີວົງສ໌

1969

1) ທ່ານເກີດວັນນີ້ ຂໍຈົ່ງມີ ຣາສີໃສສ່ອງ
ຢ່າໝົ່ນໝອງ ໃຫ້ຄອງສຸກ ຕລອດຊີວີ
ອັນໂຣຄາ ໂພຍພັຍ ຢ່າໄດ້ມີ
ຈົ່ງສຸຂີ ສຸຂີ ສົມປຣາຖນາ

• ມະໂນນຶກ ສິ່ງໃດ ໃນໂລກນີ້
ຈົ່ງໄດ້ມີ ສົມພອນ ທີ່ອອນອ່າ
ກຽດຕິຍົດ ຊື່ສຽງ ກ້ອງໂລກາ
ເຮືອງອຳນາດ ວາສນາ ໄຫຼມາກອງ

2) ທ່ານເກີດວັນນີ້ ເປັນວັນດີ ອະມຸດຕະໂຊກ
ຢ່າມີທຸກ ແລະມີໂສກ ເສົ້າໝົ່ນໝອງ
ອັນເງິນຄຳ ມາກມາຍ ຫຼາຍກ່າຍກອງ
ຢ່າມີມາຣ ໄຕ່ຕ້ອງ ຕລອດການ

# ແກ່ນນະຄອນ

ເນື້ອຮ້ອງ & ທຳນອງ : ບຸນທັນ ສີພຣິຫົມໄຊຍ໌
ນັກຮ້ອງຕົ້ນສະບັບ : ກອບແກ້ວ ປ່ຽມມະໄລ

1968

Slow Bolero
(♩ = 80)

A♭ C7 Fm

(Intro) —— ແກ່ນ... ນະ

**A**

1 Fm

ຄອນ ດັ່ງ ຄອນ ຄີງ ຊື້ງ ຕຣີງ ໃຈ ໝັ້ນ ທັນ ນະ ຊາດ - ສິດ

5 B♭m C7

ສອຍ ທໍ່ອ ຖິ່ນ ສະ ຖານ - ແລ ລ້ອມ ສຳ ຣານ ວິ ມານ ເມືອງ ແມນ... ແກ່ນ... ນະ

**B**

9 Fm

ຄອນ ດັ່ງ ມີ ມົນ ຂັງ ຝັງ ໃຈ ໝັ້ນ ແກ່ນ ຊື່ອ ຍາມ - ທ່ຽວ

13 B♭m C7 Fm

ເດີນ ເພີດ ເພີນ ສຸດ ແສນ - ບໍ່ ຢາກ ຈາກແຄ້ນແຫ່ງຄວາມ ພິ ຣົມ... ຄືນ ມີ ນ້ຳ ໃຈ ໄມ

**C**

17 F Fm

ຕຣີ ໂອບ ເອື້ອ ອາ ຣີ ໜ້າ - ນິ ຍົມ ດອກ ໄມ້ ແກ່ນ ນະ

21 A♭ C7

ຄອນ ຫອມ ຫອນຊອນ ຊື່ນ - ຢາກ ເດັດ ຢາກ ດົມ ຫອ່າງກາງ ແກ່ນ ໃຈ... ແກ່ນ... ນະ

**D**

25 Fm

ຄອນ ຄີງ ມີ ວັນ ຢ້ອນ ຫອນ ຄືນ ມາ ໃໝ່ ຫັກ ຫ້າມ - ໃຈ

29 B♭m C7 To Coda Fm 1.

ລາ ດ້ອຍ ຄວາມ ອາ ລັຍ - ບໍ່ ຢາກ ຈາກ ໄກ ແກ່ນ ນະ ຄອນ ເອີຍ... (Solo verse B)

**E** Coda

33 Fm 2. A♭ C7 Fm

ເອີຍ... (Coda) —— Fine

# ແກ່ນນະຄອນ

Key : Fm
Slow Bolero

ເນື້ອຮ້ອງ & ທຳນອງ : ບຸນທັນ ສູັພຣິທົນໄຊຍ໌
ນັກຮ້ອງຕົ້ນສະບັບ : ກອບແກ້ວ ປ່ຽມມະໄລ

1968

1) ແກ່ນ... ນະຄອນ
ດັ່ງຄອນຄົງຊີ້ງ ຕຣືງໃຈໝັ້ນ
ທັມມະຊາດສົດສວຍ ທີ່ອຖິ່ນສະຖານ
ແລລ້ອນສຳຣານ ວິມານເມືອງແມນ...

2) ແກ່ນ... ນະຄອນ
ດັ່ງມີມິນຂັງ ຝັງໃຈໝັ້ນແກ່ນ
ຊື່ອຍານທ່ຽວເດີນ ເພີດເພີນສຸດແສນ
ບໍ່ຢາກຈາກແຄ້ວນ ແຫ່ງຄວາມພີຣົມ...

• ຄົນມີນ້ຳໃຈ ໄມຕຣີ
ໂອບເອື້ອອາຣີ ໜ້ານິຍົມ
ດອກໄມ້ແກ່ນນະຄອນ ຫອມຫວນຊວນຊົມ
ຢາກເດັດຢາກດົມ ຫວ່າງກາງແກ່ນໃຈ...

3) ແກ່ນ... ນະຄອນ
ຄົງມີວັນຢ້ອນ ຫວນຄືນມາໃໝ່
ຫັກຫ້າມໃຈລາ ດ້ວຍຄວາມອາລັຍ
ບໍ່ຢາກຈາກໄກ ແກ່ນນະຄອນເອີຍ...

# ເທພີລຸ່ມລຳນ້ຳຂອງ

ເນື້ອຮ້ອງ & ທຳນອງ : ບຸນທັນ ສີພຣົຫ໌ມໄຊຍ໌

ນັກຮ້ອງຕົ້ນສະບັບ : ສົມລິດ ພັນນະວົງສ໌

Slow Waltz

(♩ = 60)

1970




































# ເທພີລຸ່ມລຳນ້ຳຂອງ

Key : Ab
Slow Waltz

ເນື້ອຮ້ອງ & ທຳນອງ : ບຸນທັນ ສຼີພຣິຫົມໄຊຍ໌
ນັກຮ້ອງຕົ້ນສະບັບ : ສິນລິຕ ພັນນະວົງສ໌

1970

| | | |
|---|---|---|
| 1) | ເທພີ | ລຸ່ມລຳນ້ຳຂອງ |
| | ສຽງຊ່າລືກ້ອງ | ນ້ອງນາງໂສພາ |
| | ຍາມຍ່າງຍ້າຍ | ສງ່ຽມກາຍທີທ່າ |
| | ສວຍສງ່າ | ກວ່າຍິງແດນໃດ... |
| 2) | ງາມຈິງ | ຍອດຍິງງາມສົມ |
| | ໃຜເຫັນນິຍົມ | ຍ້ອງຊົມທົ່ວໄປ |
| | ປຽບນາງຫຶງ | ຊອດຊຶ້ງວິໄລ |
| | ຜຸດຜ່ອງຍ່ອງໃຍ | ຫາຍິງໃດປຽບປານ... |
| • | ງາມ... | ຕາມທັມມະຊາດ |
| | ທັງມາຣະຍາດ | ແສນອ່ອນຫວານ |
| | ງາມ... | ຊຶ້ງໃນດວງມານ |
| | ຈິດໃຈສະທ້ານ | ຍາມເຈົ້າສົ່ງຍິ້ມມາ... |
| 3) | ເທພີ | ລຸ່ມລຳນ້ຳຂອງ |
| | ຜິວເນື້ອນວນຜ່ອງ | ເໝືອນທອງທາບທາ |
| | ເຈົ້າງາມລ້ຳ | ຍິ່ງໃດໃນຫຼ້າ |
| | ປຽບດັ່ງນາງຟ້າ | ລົງມາສູ່ດິນ... |

# ຣາຊິນີແຫ່ງດວງໃຈ

ເນື້ອຮ້ອງ & ທຳນອງ : ບຸນທັນ ສູ້ພຣົຫ້ມໄຊຍ໌
ນັກຮ້ອງຕົ້ນສະບັບ : ສົມລິດ ພັນນະວົງສ໌




(Intro) ____




—— ນອນ... ນາງ... ງາມ ລ້ຳ ຍິ່ງ ໃດ ທີ່ ໄດ້ ພົບ ເຫັນ




ຍິ້ມ ເຈົ້າ ບາດ ຕາ ພາ ຫົວ ໃຈ ເຕັ້ນ ຊາຍ ຕ່າງ ບໍ່ ເວັ້ນ ຝາກ ຝັງ ໄມ ຕຣີ...




ນອນ... ນາງ... ຊ່າງ ງາມ ໂສ ພາ ປຽບ ຣາ ຊິ ນີ




ເຖິງ ຢູ່ ໃກ້ ໄກ ໝາຍ ໂສ ຊົບ ພລີ ຂໍ ຕາມ ເຈົ້າ ນີ້ ໄປ ຊື່ອ ຊິ ວັນ...




ຄອບ ຄອງ ບັນ ລັງ ຮັກ ກັນ ສົມ ປອງ ວິ ມານ ງາມ ຜ່ອງ ຫ້ອງ ຫໍ ສ ວັນ




ຮັກ ດວງ ໃຈ ດວງ ຜູກ ກ່ຽວ ສັມ ພັນ ບໍ່ ມີ ແປ ຜັນ ຊື່ອ ນິ ຣັນ ດອນ...




ນອນ... ນາງ... ພຽງ ເຫັນ ຄັ້ງ ດຽວ ໝ່ຽວ ໃຈ ອາ ວອນ




ແມ່ນ ສ້າງ ກຸ ສົນ ຮ່ວມ ກັນ ຊາດກ່ອນ ຜົນ ບຸນ ຈິ່ງ ຢ້ອນ ໃຫ້ ໄດ້ ສຸກ ສົມ... (Solo verse B)




ຜົນ ບຸນ ຈິ່ງ ຢ້ອນ ໃຫ້ ໄດ້ ສຸກ ສົມ... (Coda) ____

# ຣາຊິນີແຫ່ງດວງໃຈ

Key : Bb
Bolero

ເນື້ອຮ້ອງ & ທຳນອງ : ບຸນທັມ ສູພຣຫົມໄຊຍ໌
ນັກຮ້ອງຕົ້ນສະບັບ : ສິນລິດ ພັນນະວົງສ໌

1970

1) ນວນ ນາງ
ງາມລ້ຳຍິ່ງໃດ ທີ່ໄດ້ພົບເຫັນ
ຍິ້ມເຈົ້າບາດຕາ ພາຫົວໃຈເຕັ້ນ
ຊາຍຕ່າງບໍ່ເວັ້ນ ຝາກຝັງໄມຕຣີ

2) ນວນ ນາງ
ຊ່າງງາມໂສພາ ປຽບຣາຊີນີ
ເຖິງຢູ່ໃກ້ໄກ ໝາຍໂສຊົບພລີ
ຂໍຕາມເຈົ້ານີ້ ໄປຊື່ວຊີວັນ

• ຄອບຄອງບັນລັງ ຮັກກັນສົມປອງ
ວິມານງາມຜ່ອງ ຫ້ອງຫໍສວັນ
ຮັກດຽວໃຈດຽວ ຜູກກ່ຽວສັມພັນ
ບໍ່ມີແປຜັນ ຊື່ວນິຣັນດອນ

3) ນວນ ນາງ
ພຽງເຫັນຄັ້ງດຽວ ໜ່ຽວໃຈອາວອນ
ແມ່ນສ້າງກຸສົນ ຮ່ວມກັນຊາດກ່ອນ
ຜົນບຸນຈຶ່ງຢ້ອນ ໃຫ້ໄດ້ສຸກສົມ...

# ບໍ່ຢາກມີເມັຽ

ເນື້ອຮ້ອງ & ທຳນອງ : ສນອງ ອຸ່ນອີງ

ນັກຮ້ອງຕົ້ນສະບັບ : ຈັນທະຣາ ອຸເທນສັກດາ

Fox Trot

(♩= 138)

1970






























# ບໍ່ຢາກມີເມັຽ

Key : G
Fox Trot

ເນື້ອຮ້ອງ & ທຳນອງ : ສນອງ ອຸ່ນວົງ
ນັກຮ້ອງຕົ້ນສະບັບ : ຈັນທະຣາ ອຸເທນສັກດາ

1970

1) ບໍ່ຢາກມີ ນໍ ຄຳວ່າສຣະ ເອັຽ
ບໍ່ຢາກມີເມັຽ ມາເປັນເຈົ້າຫົວໃຈ
ງາມດັ່ງນາງຟ້າ ລູກເສດຖີລອຍໃຫຍ່
ບໍ່ຂໍສິນໃຈ ຍ້ອນບໍ່ຢາກມີເມັຽ...

2) ຂ້ອຍຢູ່ຄົນດຽວ ນີ້ສຸກໃຈເສັຽຈິງ
ເວົ້າເຣື່ອງຜູ້ຍິງ ພາໃຈຂ້ອຍອ່ອນເພັຽ
ໃຜຢາກມີທຸກ ອຸກເອົ້າຈົ່ງມີເມັຽ
ໄປຫຼິ້ນໄພ້ເສັຽ ຣະວັງເມັຽຊິບິດຫູ...

• | ມີເມັຽນີ້ ແສນລຳບາກ
ຍາມທຸກຍາມຍາກ ດ່າມີງໆ ກູງ
ຫາກມີເມັຽນ້ອຍ ສຽງປ້ອຍກ້ອງຫູ
ຄິດແລ້ວຄິດດູ ຢູ່ຜູ້ດຽວສະບາຍ...

3) ຂ້ອຍຢາກມີ ງໍ ຄຳວ່າສຣະ ເອີນ
ຂ້ອຍຢາກມີເງິນ ຢ່າງເຫຼືອລົ້ນມາກມາຍ
ບໍ່ຢາກມີເມັຽ ມາຮ່ວມໝອນຄຽງກາຍ
ຢາກຢູ່ດຽວດາຍ ຄົງສຸກສະບາຍຈິງເອີຍ...

# ວຽງໃນຝັນ

ເນື້ອຮ້ອງ & ທຳນອງ : ສຸຣິວັດ ຣັຕນະສວັນ
ນັກຮ້ອງຕົ້ນສະບັບ : ທັນຕະວັນ ຣາຊາສັກດ໌

Rumba Bolero (♩ = 71) 1965

(Intro) Muted Guitar... Flute...

Cm Cm Ab Eb Gm Bb G

**A**

Cm Ab Eb Gm Bb F G

ຄອຍ ເຝົ້າ - ຄອຍ ແຕ່ ພຽງ ໃນ ຝັນ_____ ຢາກ ເຫັນ ວຽງ ຈັນ ນ້ອງ ຕ້ອງ ຝັນ ທຸກ ວັນ ເວ ລາ ຊາດ -

Cm Eb Fm Gm Bb G7

ນີ້ ຄົງ ສິ້ນ ບຸນ ວາ ສ ນາ ມີ ແຕ່ ຄືນ ເຊົ້າ ກ່າວ ມາ ງາມ ໜັກ ໜາ ໂອ້ ເມືອງ ວຽງ ຈັນ...

**B**

Cm Ab Eb Gm Bb F G

ພໍ ໄດ້ - ຊົມ ດັ່ງ ໃຈ ໝັ້ນ ໝາຍ_____ ງາມ ແສນ ວິ ລັຍ ໂອ້ ຫາດ ຊາຍ ສົມ ນາມ ດອນ ຈັນ ປຽບ

Cm Eb Fm Gm Bb Cm

ເໝືອນ ເທ ວາ ບິນ ຟ້າ ສ ວັນ ປັ້ນ ແຕ່ງ ເປັນ ຂວັນ ວຽງ ຈັນ ດັ່ງ ວິ ມານ ສຸດ ແສນ ງາມ ຕາ...

**C**

Ab Eb Gm Cm Eb Gm

ງາມ ຫາດ - ຫຼວງ ຍອດ ສູງ ທຽມ ເມກ_____ ສົມ ເປັນ ເມືອງ ເອກ ງາມ ທຸກ ຢ່າງ ສຸດ ພັລ - ນາ_____ ງາມ ທໍ່ ພຣະ

Cm Fm F G7

ແກ້ວ ແສງ ວາວ ແວວ ສວຍ ເດັ່ນ ໃນ ຕາ ສົມ ດັ່ງ ທີ່ ລື ກັນ ມາ ວ່າ ງາມ ເໜືອ ຟ້າ_____ ແດນ ໄກ...

**D**

Cm Ab Eb Gm Bb G

ພໍ ໄດ້ - ຊົມ ຈົນ ລືມ ຖິ່ນ ຖານ_____ ມາ ເຫັນ ວຽງ ຈັນ ສຸກ ສຳ ຣານ ເໜືອ ເມືອງ ໃດ ໆ ໄດ້ -

Cm Eb Fm Gm Bb Cm

ເຫັນ ຣາ ຕຣີ ມີ ແສງ ສີດ ໃສ ເຮືອງ ຮຸ່ງ ດັ່ງ ຟ້າ ອຳ ໄພ ຊວນ ຈິດ ໃຈ ໃຝ່ ຝັນ ບໍ່ ລືມ...

To Coda 1. (Solo verse B)

**E**

Coda

Cm Ab Eb Bb Cm Cm9

2. ລືມ... (Coda)

gliss. Fine

# ວຽງໃນຝັນ

Key : Cm
Slow Bolero

ເນື້ອຮ້ອງ & ທຳນອງ : ສຸຣິວັດ ຣັຕນະສວັນ
ນັກຮ້ອງຕົ້ນສະບັບ : ທັນຕະວັນ ຣາຊາສັກດ໌

1965

1) ຄອຍເຝົ້າຄອຍ ແຕ່ພຽງໃນຝັນ
ຢາກເຫັນວຽງຈັນ ນ້ອງຕ້ອງຝັນທຸກວັນເວລາ
ຊາດນີ້ຄົງສິ້ນບຸນວາສນາ ມີແຕ່ຄືນເຂົາກ່າວມາ
ງາມໜັກໜາ ໂອ້ເມືອງວຽງຈັນ

2) ພໍໄດ້ຊົມ ດັ່ງໃຈໝັ້ນໝາຍ
ງາມແສນວິລັຍ ໂອ້ທາດຊາຍສົມນາມດອນຈັນ
ປຽບເໝືອນເທວາບິນຟ້າສວັນ ປັ້ນແຕ່ງເປັນຂວັນວຽງຈັນ
ດັ່ງວິມານ ສຸດແສນງາມຕາ

• ງາມທາດຫຼວງ ຍອດສູງທຽມເມກ
ສົມເປັນເມືອງເອກ ງາມທຸກຢ່າງສຸດພັລນາ
ງາມຫໍພຣະແກ້ວ ແສງວາວແວວສວຍເດັ່ນໃນຕາ
ສົມດັ່ງທີ່ລືກັນມາ ວ່າງາມເໜືອຟ້າແດນໄກ

3) ພໍໄດ້ຊົມ ຈົນລືມຖິ່ນຖານ
ມາເຫັນວຽງຈັນ ສຸກສຳຣານເໜືອເມືອງໃດໆ
ໄດ້ເຫັນຣາຕຣີມີແສງສົດໃສ ເຮືອງຮຸ່ງດັ່ງຟ້າອຳໄພ
ຊວນຈິດໃຈ ໃຝ່ຝັນບໍ່ລືມ...

# ຢ່າກຽດກັນ

ເນື້ອຮ້ອງ & ທຳນອງ : ສ. ແສງສີຣີວັນ
ນັກຮ້ອງຕົ້ນສະບັບ : ນິດ ວິຈິດຕະວົງ

1969

Slow (♩ = 60)

Cm Ab Eb Cm Fm Ab Bb Cm Eb

(Intro) ____

**A**

1 Ab Eb Gm Cm Bb Ab Bb

ເຖິງ ແມ່ນ ຕັດ ຮັກ ກໍ ຢ່າ ກຽດ ກັນ ເຖິງ ຕັດ ສັນ ພັນ ຂໍ ຢ່າ ແໜງ ໜ່າຍ

5 Cm Gm Eb Ab Gm C7 Fm Ab

ໃຫ້ ຄວາມເປັນ ມິດ ສ ຖິດ ແໜ້ນ ໃຫ້ ຄວາມລົ້ງ ແກ່ນ ຕໍ່ ກັນ ໄວ້ ເພາະ ຍັງ ໄດ້ ຢູ່ ໂລກ ດຽວ ກັນ

**B**

9 Bb Eb Gm Cm Bb Ab Bb

ເຖິງ ແມ່ນ ໝົດ ຮັກ ກໍ ຢ່າ ປະ ນາມ ຂໍ ຢ່າ ໄດ້ ທຳ ໃຫ້ ໃຈ ຊ້ຳ ຫອັ່ນ

13 Cm Gm Eb Ab Gm Fm Bb Eb Ab Abm

ຢູ່ ຢ່າງເປັນ ມິດ ກັນດີ ກວ່າ ຂືນ ນິວເຄືອງໂກດ ຕໍ່ ກັນ ນັ້ນ ຄົງຕຣົມໂສກ ສັນ__ ຕລອດ ຕາຍ

**C**

17 Eb Fm Cm Bb7 Eb7 Ab Bb

ບາງ ທີ ວັນ ນຶ່ງ ເຂົ້າ ໃຈ ກັນ ວັນ ນຶ່ງ ເກີດ ສິ່ງ ສານ ວັນ ນັ້ນ ຄົງ ອາຍ

21 Eb Cm Gm Fsus4 Bb Ab F

ຄິດ ຈະ ຮັກ ຄືນ ຄົງເກງ ໃຈ ແໜງ ສູ້ ເປັນ ມິດ ຕໍ່ ກັນ ໄວ້ ດີ ກວ່າ ຈະກຽດ ຊັງ

**D**

25 Bb Eb Gm Cm Bb Ab Bb

ສູນ ສິ້ນ ຄວາມ ຮັກ ກໍ ຢ່າ ໃຈ ດຳ ຂໍ ຢ່າ ສ້າງ ກັນ ໄວ້ ເປັນ ຮອຍ ດ່າງ

29 Cm Gm Eb Ab Eb Bb To Coda 1. Eb Ab Abm

ປ່ອຍຄວາມເຈັບ ແຄ້ນ ໃຫ້ ສິ້ນ ສຸດ ຫືອ ໃຈ ຈົ່ງ ຢຸດ ຢ່າເມີນໝາງ ແມ່ນ ຊີບ ຫາກ ຍັງ ຢ່າກຽດ ກັນ...

(Solo verse B)

**E**

Coda 𝄌

33 2. Eb Cm Fm Bb Ab Gm Cm Bb Eb

ກັນ... (Coda) ____

Fine

# ຢ່າກຽດກັນ

Key : Eb
Slow

ເນື້ອຮ້ອງ & ທຳນອງ : ສ. ແສງສິຣິວັນ
ນັກຮ້ອງຕົ້ນສະບັບ : ນິດ ວິຈິຕຕະວົງ

1969

(ເວົ້າ) "ຍອດຮັກຂອງອ້າຍ ທາງຮັກຂອງເຮົາມີອຸປສັກເສັຽແລ້ວ
ແຕ່ເຖິງນ້ອງຈະປ່ຽນໃຈຈາກອ້າຍກໍຕາມເຖີດ ອ້າຍທົນຕໍ່ຄວາມຊ້ຳນັ້ນໄດ້
ຂໍສິ່ງດຽວ ນ້ອງຈົ່ງໃຫ້ຄວາມເປັນມິດແກ່ອ້າຍກໍພໍ..."

1) ເຖິງແມ່ນຕັດຮັກ ກໍຢ່າກຽດກັນ
ເຖິງຕັດສັມພັນ ຂໍຢ່າແໜງໜ່າຍ
ໃຫ້ຄວາມເປັນມິດສຖິດແໜ້ນ ໃຫ້ຄວາມລຶ້ງແກ່ນຕໍ່ກັນໄວ້
ເພາະຍັງໄດ້ຢູ່ ໂລກດຽວກັນ

2) ເຖິງແມ່ນໝົດຮັກ ກໍຢ່າປະນາມ
ຂໍຢ່າໄດ້ທຳ ໃຫ້ໃຈຊ້ຳຫວັ່ນ
ຢູ່ຢ່າງເປັນມິດກັນດີກວ່າ ຂືນມົວເຄືອງໂກດຕໍ່ກັນນັ້ນ
ຄົງຕຣົມໂສກສັນ ຕລອດຕາຍ

• ບາງທີວັນນຶ່ງ ເຂົ້າໃຈກັນ
ວັນນຶ່ງເກີດສົງສານ ວັນນັ້ນຄົງອາຍ
ຄິດຈະຮັກຄືນຄົງເກງໃຈ ແໜງສູ້ເປັນມິດຕໍ່ກັນໄວ້
ດີກວ່າ ຈະກຽດຊັງ

3) ສູນສິ້ນຄວາມຮັກ ກໍຢ່າໃຈດຳ
ຂໍຢ່າສ້າງກັມ ໄວ້ເປັນຮອຍດ່າງ
ປ່ອຍຄວາມເຈັບແຄ້ນໃຫ້ສິ້ນສຸດ ຫົວໃຈຈົ່ງຢຸດຢ່າເມີນໝາງ
ແມ່ນຊິບຫາກຍັງ ຢ່າກຽດກັນ...

# ຢ່າພົບກັນອີກ

ເນື້ອຮ້ອງ & ທຳນອງ : ສີລາວົງ ແກ້ວ

ນັກຮ້ອງຕົ້ນສະບັບ : ແສນສັກດາ ປ້ອງພິມຄຳ

1971
























# ຢ່າພົບກັນອີກ

Key : Eb
Boston

ເນື້ອຮ້ອງ & ທຳນອງ : ສີລາອິງ ແກ້ວ
ນັກຮ້ອງຕົ້ນສະບັບ : ແສນສັກດາ ປ້ອງພິມຄຳ

1971

| | | | |
|---|---|---|---|
| 1) | ພໍແລ້ວ | ເທົ່ານີ້ | ກໍເຈັບເຫຼືອທົນ |
| | ຢ່າມາ | ປີ້ປົ່ນ | ຫົວໃຈກັນອີກ |
| | ສອງເຮົາ | ແຍກກັນ | ຢູ່ຄົນລະຊີກ |
| | ເຫັນກັນຈົ່ງຫຼີກ | ຢ່າພົບກັນອີກ | ຕໍ່ໄປ... |

| | | | |
|---|---|---|---|
| 2) | ພໍແລ້ວ | ສາບແລ້ວ | ບໍ່ຂໍຮ່ວມທາງ |
| | ຈົ່ງໄປ | ໃຫ້ຫ່າງ | ເຈົ້າຄົນຫຼາຍໃຈ |
| | ຂໍຈຳ | ເທົ່າຈົນ | ຊື່ວຊີວາວາຍ |
| | ຊາດນີ້ຊາດໃດ | ສອງເຮົາຢ່າໄດ້ | ພົບກັນ... |

(Solo Guitar 16 Bars)

| | | | |
|---|---|---|---|
| 3) | ພໍແລ້ວ | ສາບແລ້ວ | ບໍ່ຂໍຮ່ວມທາງ |
| | ຈົ່ງໄປ | ໃຫ້ຫ່າງ | ເຈົ້າຄົນຫຼາຍໃຈ |
| | ຂໍຈຳ | ເທົ່າຈົນ | ຊື່ວຊີວາວາຍ |
| | ຊາດນີ້ຊາດໃດ | ສອງເຮົາຢ່າໄດ້ | ພົບກັນ... |

# ບໍ່ເຄີຍເຫັນ

Soul Sloopy

1970

ເນື້ອຮ້ອງ & ທຳນອງ : ... ? ...

ນັກຮ້ອງຕົ້ນສະບັບ : ອຳມະຣິດ












































# ບໍ່ເຄີຍເຫັນ

Key : Ab
Soul Sloopy

ເນື້ອຮ້ອງ & ທຳນອງ : ...?...
ນັກຮ້ອງຕົ້ນສະບັບ : ອຳມະຣິດ

1970

1) ຕັ້ງແຕ່ເກີດມາ ຍັງບໍ່ເຄີຍເຫັນ
ບໍ່ເຄີຍຈະເຫັນ ໃຜງາມປານນີ້
ແຕ່ນ້ອຍຈົນໃຫຍ່ ມາໄດ້ຫຼາຍປີ
ບໍ່ເຄີຍຈະມີ ໃຈຮັກຍິງໃດ

2) ຕໍ່ເມື່ອມາພົບ ສິບແອວເນຄນາງ
ດັ່ງມີມົນຂັງ ຝັງຕຣຶງໃຈໄວ້
ດັ່ງຖືກເວດມົນ ສະກົດດວງໃຈ
ນ້ອງມາແຕ່ໃສ ອ້າຍບໍ່ເຄີຍເຫັນ

• ເນື້ອນອນ ຊອນຝັນ
ພັກຜ່ອງພັນ ດັ່ງຈັນເພັນ
ຜົມກໍດຳ ງາມເດັ່ນ
ນ້ອງຄືງຈະເປັນ ເທວດາ

3) ເປັນອາສນາ ຈຶ່ງມາພານພົບ
ໄດ້ມາປຣະສົບ ມິ່ງຂວັນຊີວາ
ໄດ້ຊົມພຣງໂສມ ຍັງຊື່ນອົນຍາ
ຫາກໄດ້ວິວາ ຄືງຍິ່ງສຸກເອີຍ...

# ຮັກນິ່ງໃຈດຽວ

ເນື້ອຮ້ອງ & ທຳນອງ : ສີລາວົງ ແກ້ວ
ນັກຮ້ອງຕົ້ນສະບັບ : ແສນສັກດາ ປ້ອງພິມຄຳ

Slow Soul (♩ = 75) 1970

C♯m B C♯m B E

(Guitar Wah Wah) ______ ນ້ອງ -

A

G♯m E G♯7 C♯m A E C♯m C♯7 F♯m

1 ຄື ຍອດ ຍິງ ທີ່ ອ້າຍ ຮັກ ໝັ້ນ____ ຮັກ ດັ່ງ ຊີ ວັນ ຮັກ ຍິ່ງ - ເໜືອ - ຍິງ ໃດ____

B C♯m E G♯m F♯m G♯m C♯m B

8 ___ ຮັກ ນ້ອງລົ້ນ ຊວງ ຮັກໝົດ ໃຈ____ ເທີດ - ທູນ ໄວ້____ ດ້ອຍ - ຄວາມ ຮັກ ດ້ອຍ - ຄວາມ ຫວງ...____ ຮ້ອຍ -

B

G♯m E G♯7 C♯m A E C♯m C♯7 F♯m B

16 ຍິງ ພັນ ນາງ ບໍ່ ຂໍ ຂ້ອງ ກ່ຽວ____ ຮັກ ນ້ອງຄົນ ດຽວ ຫຼາຍ - ກວ່າ ຍິງ - ທັງ ປວງ____ ຮັກ ສຸດ ຫົວ

C♯m E G♯m F♯m G♯m E E7 A

24 ໃຈ ຮັກໝົດ ຊວງ____ ອ້າຍ - ເຝົ້າ ຫວງ ເຝົ້າ - ຖ ນອມ ແດ່ ນອນ ນ້ອງ...____ ຄົນ ດີ ອ້າຍ

C

B G♯m E C♯m G♯m E A G♯m C♯m

31 ເອີຍ ຢ່າໄດ້ ຣະ ແວງ ອ້າຍ ນີ້ ເລີຍ ໝາ____ ອ້າຍ - ໃຫ້ - ສັນ - ຍາ ວ່າ - ຈະ ຊື່ ຕຣົງ ຕໍ່ ນ້ອງ____ ອ້າຍ ຄອຍ ເອົາ

F♯m C♯m G♯m C♯m F♯m G♯m C♯m B

39 ໃຈ ມິ ໃຫ້ ຈອນໃຈ ເສົ້າ ໝອງ____ ອ້າຍ ເຝົ້າ ໝາຍ ປອງ____ ແດ່ນອນ ນ້ອງ ຢູ່ ທຸກຄືນ ວັນ...____ ຫົວ -

D

G♯m E G♯7 C♯m A E C♯m C♯7 F♯m B

47 ໃຈ ດວງ ດຽວ ທີ່ ອ້າຍ ມີ ຢູ່____ ມອບ ໃຫ້ ຍອດ ຊູ້ ອຸ - ທິດ ໃຫ້ - ນົງ ຄານ____ ອ້າຍ ຈະ ຮັກ

C♯m E G♯m F♯m G♯m E

55 ດຽວ ພຽງ ເທົ່າ ນັ້ນ____ ບໍ່ ແບ່ງ ປັນ ຄວາມ ຮັກ ນີ້ ໃຫ້ ແກ່ ໃຜ...

Coda

E

C♯m B C♯m B C♯m B

61 (Guitar Wah Wah) ______

C♯m B C♯m B E

67 ______ Fine

# ຮັກນິ່ງໃຈດຽວ

Key : E
Slow Soul

ເນື້ອຮ້ອງ & ທຳນອງ : ສີລາວົງ ແກ້ວ
ນັກຮ້ອງຕົ້ນສະບັບ : ແສນສັກດາ ປ້ອງພິມຄຳ

1970

1) ນ້ອງຄືຍອດຍິງ ທີ່ອ້າຍຮັກໝັ້ນ
ຮັກດັ່ງຊີວັນ ຮັກຍິ່ງເໜືອຍິ່ງໃດ
ຮັກນ້ອງລົ້ນຊວງ ຮັກໝົດໃຈ
ເທີດທູນໄວ້ ດ້ວຍຄວາມຮັກດ້ວຍຄວາມຫວງ

2) ຮ້ອຍຍິງພັນນາງ ບໍ່ຂໍຂ້ອງກ່ຽວ
ຮັກນ້ອງຄົນດຽວ ຫຼາຍກວ່າຍິງທັງປວງ
ຮັກສຸດຫົວໃຈ ຮັກໝົດຊວງ
ອ້າຍເຝົ້າຫວງ ເຝົ້າຖຸນອມແຕ່ນອນນ້ອງ

• ຄົນດີອ້າຍເອີຍ ຢ່າໄດ້ຣະແວງອ້າຍນີ້ເລີຍໜາ
ອ້າຍໃຫ້ສັນຍາ ວ່າຈະຊື່ຕຣົງຕໍ່ນ້ອງ
ອ້າຍຄອຍເອົາໃຈ ມິໃຫ້ຈອມໃຈເສົ້າໝອງ
ອ້າຍເຝົ້າໝາຍປອງ ແຕ່ນອນນ້ອງຢູ່ທຸກຄືນວັນ

3) ຫົວໃຈດວງດຽວ ທີ່ອ້າຍມີຢູ່
ມອບໃຫ້ຍອດຊູ້ ອຸທິດໃຫ້ນົງຄານ
ອ້າຍຈະຮັກດຽວ ພຽງເທົ່ານັ້ນ
ບໍ່ແບ່ງປັນ ຄວາມຮັກນີ້ໃຫ້ແກ່ໃຜ...

# ຂ້າຫົວໃຈ

ເນື້ອຮ້ອງ & ທຳນອງ : ສ. ແສງສີຣິອັນ
ນັກຮ້ອງຕົ້ນສະບັບ : ສິນຟອງ ຊົງມີໄຊ




(Trompet) ______________________ (Guitar) ______________




ຊາດ - ນີ້ ຊາດ ນີ້ ມີ ກັມ ຄວາມ ຮັກ ທຳ ຊ້ຳ ອີກ ປວດ ຮ້າວ




ຝາກ ຮັກ ໃຜ ກໍ ໝົດ ຫວັງ ໄປ ທຸກ ຄາວ ເໝືອນ ຕົວ ເຮົາ ນີ້ ບໍ່ ມີ ຄ່າ...




ຄວາມ ຮັກ ສິ້ນ - ສາຍ ຫົວ ໃຈ ຂ້າ ຊ້ຳ ອ້າຍ ຍັງປຣະນາມ ແລະ ນິນ ທາ




ໂປຣດ ປຣະຫານ ຂ້າ ນີ້ ໃຫ້ ຕາຍ ໄປ ເສັຽ ດີ ກວ່າ ຢ່າ ພຽງແຕ່ ຂ້າ - ຫົວ ໃຈ...




ຢ່າ ເຍີ້ຍ ຢ່າ ເຍີ້ຍ ຕົວ ຂ້າ ຂໍ ເມດ ຕາ ຂ້າ ຜູ້ ຈົນ ຮ້າຍ




ຕັດ ຮັກ ແລ້ວ ຢ່າ ຄິດ ຄິດ ຕາມ ຜານ ໃຈ ໂປຣດ ຈົ່ງ ໄດ້ ໃຫ້ ຄວາມປຣາ ນີ...




ສິ້ນ ຮັກ ສິ້ນ - ຫວັງ ຂ້າ ຍັງ ທົນ ໄຫວ ຂໍ ພຽງຫົວໃຈ ຢ່າ ປົ່ນ ປີ້




ແຕ່ ອ້າຍ ນັ້ນ ກັບ ເຍີ້ຍ ໃຫ້ ອາຍ ໝາຍໃຈ ບົບ ບີ້ ຫົວ ໃຈ ຂ້າ ນີ້ - ໃຫ້ ຕາຍ...




ຕາຍ... (Trompet) ______________________



# ຂ້າຫືວໃຈ

Key : Cm
Slow

ເນື້ອຮ້ອງ & ທຳນອງ : ສ. ແສງສີຣິວັນ
ນັກຮ້ອງຕົ້ນສະບັບ : ສົມພອງ ຊີງມີໄຊ

1966

| | | |
|---|---|---|
| 1) | ຊາດນີ້ | ຊາດນີ້ມີກັມ |
| | ຄວາມຮັກທຳ | ຂ້ຳອີກປວດຮ້າວ |
| | ຝາກຮັກໃຜ | ກໍໝົດຫວັງໄປທຸກຄາວ |
| | ເໝືອນຕົວເຮົາ | ນີ້ບໍ່ມີຄ່າ |
| 2) | ຄວາມຮັກສິ້ນສາຍ | ຫົວໃຈຂ້າຊ້ຳ |
| | ອ້າຍຍັງປຣະນາມ | ແລະນິນທາ |
| | ໂປຣດປຣະຫານ | ຂ້ານີ້ໃຫ້ຕາຍ |
| | ໄປເສັຽດີກວ່າ | ຢ່າພຽງແຕ່ຂ້າຫົວໃຈ |
| 3) | ຢ່າເຍີ້ຍ | ຢ່າເຍີ້ຍຕົວຂ້າ |
| | ຂໍເມດຕາ | ຂ້າຜູ້ຈົນຮ້າຍ |
| | ຕັດຮັກແລ້ວ | ຢ່າຄິດຕິດຕາມຜານໃຈ |
| | ໂປຣດຈື່ງໄດ້ | ໃຫ້ຄວາມປຣານີ |
| 4) | ສິ້ນຮັກສິ້ນຫວັງ | ຂ້າຍັງທົນໄຫວ |
| | ຂໍພຽງຫົວໃຈ | ຢ່າປີ່ນປີ້ |
| | ແຕ່ອ້າຍນັ້ນ | ກັບເຍີ້ຍໃຫ້ອາຍ |
| | ໝາຍໃຈບີບບີ້ | ຫົວໃຈຂ້ານີ້ໃຫ້ຕາຍ... |

# ນີ້ແຫຼະຜູ່ຍິງ

ເນື້ອຮ້ອງ & ທຳນອງ : ສ. ແສງສີຣິວັນ

ນັກຮ້ອງຕົ້ນສະບັບ : ສົມພອງ ຊົງມີເຊ

1970







ນີ້ ແຫຼະ ຜູ່ ຍິງ ຟ້າ ໃຫ້ ເກີດ ມາ ເກີດ ມາ ເພື່ອ ເປັນ ມານ ດາ ຂອງ ຄົນ ບໍ່ ໄດ້




ເກີດ ເພື່ອ ມາ ສ້າງ ຄວາມ ໝອງ ໝົ່ນ ເກີດ ມາ ສ້າງ ຄົນ ສ້າງ - ຄົນ ສ້າງ - ຄົນ




ໃຜ ວ່າ ຜູ່ ຍິງ ນີ້ ມີ ແຕ່ ລວງ ທີ່ ຍິງ ຊ້ຳ ຊອງ ເພາະ ຄວາມ ໝອງ ໝົ່ນ ບໍ່ ແມ່ນ




ເກີດ ຍ້ອນ ຊາຍ ຫຼື ຈິ່ງ ເສັຽ ຄົນ ຄວາມ ສາວ ປີ້ ປີ່ນ ດ້ອຍ ກົນ____ ຊາຍ - ລວງ




ຢ່າ ຄິດ ຢ່າ ຫາ ວ່າ ຍິງ ເກີດ ມາ ຮົກ ໂລກ ບໍ່ ມີ ຜູ່ ຍິງ ຊາຍ - ກໍ ຄືງ ໂສກ ບ້າ ປ່ອງ -




- ຢ່າ ເໝົາ ວ່າ ຍິງ ທຸກ ຄົນ ຫຼອກ ລວງ ຊາຍ ກໍ ຫຼອກ ລວງ ໃຜ ໝໍ່ ລວງ ກັນ ຫຼາຍ ກວ່າ




ແມ່ນ ດ່າ ວ່າ ຍິງ ນີ້ ສົ້ນ ຄວາມ ໝາຍ ເຫດ ໃດ ຜູ່ ຊາຍ ຈິ່ງ ຍັງ ວິ ອາ ບໍ່ ເຫັນ




ຢູ່ ຜູ່ ດຽວ ຈົມ ດິນ ຖົມ ໜ້າ ເກົ່ງ ຈິງ ກໍ ຢ່າ ວິ ອາ____ ກັບ ຍິງ...




ຍິງ... (Coda) ____

# ນີ້ແຫຼະຜູ່ຍິງ

Key : Db
Slow

ເນື້ອຮ້ອງ & ທຳນອງ : ສ. ແສງສີຣິວັນ
ນັກຮ້ອງຕົ້ນສະບັບ : ສີມຟອງ ຊິງມີໄຊ

1970

1) ນີ້ແຫຼະຜູ່ຍິງ ຟ້າໃຫ້ເກີດມາ
ເກີດມາເພື່ອເປັນ ມານດາຂອງຄົນ
ບໍ່ໄດ້ເກີດເພື່ອມາ ສ້າງຄວາມໝອງໝົ່ນ
ເກີດມາສ້າງຄົນ ສ້າງຄົນ ສ້າງຄົນ

2) ໃຜວ່າຜູ່ຍິງ ນີ້ມີແຕ່ລວງ
ທີ່ຍິງຊໍ້າຊວງ ເພາະຄວາມໝອງໝົ່ນ
ບໍ່ແມ່ນເກີດຍ້ອນຊາຍ ຫຼືຈິ່ງເສັຽຄົນ
ຄວາມສາວປີ້ປົ່ນ ດ້ອຍກົນຊາຍລວງ

• ຢ່າຄິດຢ່າຫາ ວ່າຍິງເກີດມາຮົກໂລກ
ບໍ່ມີຜູ່ຍິງຊາຍກໍ ຄົງໂສກບ້າປ່ວງ
ຢ່າເໝົາວ່າຍິງ ທຸກຄົນຫຼອກລວງ
ຊາຍກໍຫຼອກລວງ ໃຜໝໍລວງກັນຫຼາຍກວ່າ

3) ແມ່ນດ່າວ່າຍິງ ນີ້ສິ້ນຄວາມໝາຍ
ເຫດໃດຜູ່ຊາຍ ຈິ່ງຍັງວິວາ
ບໍ່ເຫັນຢູ່ຜູ່ດຽວ ຈົນດິນຖົມໜ້າ
ເກົ່ງຈິງກໍຢ່າ ວິວາກັບຍິງ...

# ຄອຍຄວາມຫວັງ

ເນື້ອຮ້ອງ : ສີລາວົງ ແກ້ວ / ທຳນອງ : ວິຣິດ ໄຕຣມະນີ

ນັກຮ້ອງຕົ້ນສະບັບ : ແສນສັກດາ ປ້ອງພິມຄຳ

1968

































# ຄອຍຄວາມຫວັງ

Key : Bb
Cha Cha Cha

ເນື້ອຮ້ອງ : ສີລາວົງ ແກ້ວ / ທຳນອງ : ວິຣິດ ໄຕຣມະນີ
ນັກຮ້ອງຕົ້ນສະບັບ : ແສນສັກດາ ປ້ອງພິມຄຳ

1968

1) ດວງຕາວັນ ໃກ້ລັບຟ້າ
ໂສກຈິງໜາ ຟ້າສີທອງ
ສາດແສງລົງ ໃສ່ນ້ຳຂອງ
ເມື່ອໄດ້ມອງ ເສົ້າຣືທັຍ

2) ດວງຕາວັນ ໃກ້ສິ້ນແສງ
ຂອບຟ້າແດງ ເໝືອນດັ່ງໄຟ
ຈະເຜົາໂລກ ໃຫ້ສລາຍ
ຫຼືຢ່າງໃດ ຄິດໄຫວຫວັ່ນ

• ນັ່ງຢູ່ ດຽວດາຍ
ຍອດດວງໃຈ ຈາກໄປຫຼາຍວັນ
ນັ່ງຄິດ ນັ່ງຝັນ
ລຳພັນ ຫານາງ

3) ພໍຕາວັນ ລັບຂອບຟ້າ
ໝູ່ນົກກາ ບິນຄືນຮັງ
ຂ້າຈະຄອຍ ດ້ວຍຄວາມຫວັງ
ຄິດວ່ານາງ ຄືງກັບມາ...

# ໃຈຮັກຍັງໝັ້ນ

ເນື້ອຮ້ອງ & ທຳນອງ : ສ. ແສງສິຣິວັນ
ນັກຮ້ອງຕົ້ນສະບັບ : ສຸນທອນ ເທວາ

Slow (♩ = 64) 1975

Eb Cm Bb Eb C7 Fm Bb

(Trompet) (Strings)

Ab Gm Cm Ab Fm Bb Eb Bb

ເຖິງ ວັນ ເວ

**A**

Eb Fm Cm Gm Cm Ab Eb Eb7

ລາ ນາ ທີ ຈະ ໝຸນ ປ່ຽນ ໄປ ທະ ເລ ຈະ ເຫືອດ ແຫ້ງ ຫາຍ ພູ ເຂົາ ທະ ລາຍ ກໍ ຢ່າ ແມ່ນ ຟ້າ ຈະ

Ab C7 Fm Ab Bb G7

ປີ້ນ ແຜ່ນ ດິນ ຈະ ໄຫວ ຕາມ ມາ ແຕ່ ແຮງ ຮັກ ແຮງ ສັດ ທາ ໃຈ ປຣາ ຖ ນາ ຍັງ ໝັ້ນ... ສອງ ເຮົາ ເຄີຍ

**B**

Eb Fm Cm Gm Cm Ab Eb Eb7

ນອນ ຮ່ວມ ໝອນ ຮ່ວມ ຮຽງ ສ ເນ່ ຫາ ຊື່ນ ຊົມ ສຸກ ສົມ ອຸ ຣາ ບັດ ນີ້ ຕ້ອງ ມາ ໄກ ກັນ ນ້ອງ - ຢູ່ ຢ່າງ

Ab C7 Fm Ab Bb Eb

ໃດ ສຸກ ໃຈ ຫຼື ເສົ້າ ໂສກ ສັນ ສ່ວນ ຕົວ ອ້າຍ ເອງ ແຫ້ ນັ້ນ ຢູ່ ດຽວ ແສນ ຈະ ປ່ຽວ ພອຍ... ຄິດ ຮອດ

**C**

G7 Cm Bb Ab Eb Bb

ນ້ອງ ກໍ ໄດ້ ແຕ່ ນອງ ພາບ ຖ່າຍ ຂໍ ຝາກ ຄວາມ ໃນ ຫົວ ໃຈ ກັບ ສາຍ ລົມ ລອຍ ວ່າ ອ້າຍ ຍັງ

Gm Ab Bb Cm Bb Cm Bb

ຮັກ ທຸກ ວັນ - ຍັງ ຄອຍ ຄິດ ເຖິງ ອ້າຍ ພຽງ ນ້ອຍ ແດ່ ບໍ່ ນໍ ດວງ ໃຈ... ເຖິງ ເຮົາ ໄກ

**D**

Eb Fm Cm Gm Cm Ab Eb Eb7

ກັນ ຈະ ນານ ຈັກ ຟ້າ ຈັກ ປີ ຮັກ ອ້າຍ ເກີດ ຈາກ ໃຈ ນີ້ ບໍ່ ມີ ຫຍັງ ມາ ລຶບ ໄດ້ ຮັກ - ແລະ ຫ່ວງ

Ab C7 Fm Ab Bb To Coda 1. Eb Bb

ນ້ອງ ຄອຍ ນ້ອງ ຢູ່ ທຸກ ວັນ ໄປ ມຸ່ງ ຫວັງ ພົບ ກັນ ຄັ້ງ ໃໝ່ ຫາກ ໃຈ ນ້ອງ ບໍ່ ປ່ຽນ ແປງ...

(Solo verse B)

**E**

Coda 2. Eb Ab Gm Fm Bb Eb Fm Abm E Eb Ebmaj7

ແປງ... (Flute)

Fine

# ໃຈຮັກຍັງໝັ້ນ

Key : Eb
Slow

ເນື້ອຮ້ອງ & ທຳນອງ : ສ. ແສງສິຣິວັນ
ນັກຮ້ອງຕົ້ນສະບັບ : ສຸນທອນ ເທວາ

1975

1) ເຖິງວັນເວລາ ນາທີຈະໝູນປ່ຽນໄປ
ທະເລຈະເຫືອດແຫ້ງຫາຍ ພູເຂົາທະລາຍກໍ່ຢ່າ
ແມ່ນຟ້າຈະປີ້ນ ແຜ່ນດິນຈະໄຫວຕາມມາ
ແຕ່ແຮງຮັກແຮງສັດທາ ໃຈປຣາຖນາຍັງໝັ້ນ

2) ສອງເຮົາເຄີຍນອນ ຮ່ວມໝອນຮ່ວມຮຽງສເນ່ຫາ
ຊື່ນຊົມສຸກສົມອຸຣາ ບັດນີ້ຕ້ອງມາໄກກັນ
ນ້ອງຢູ່ຢ່າງໃດ ສຸກໃຈຫຼືເສົ້າໂສກສັນ
ສ່ວນຕົວອ້າຍເອງແທ້ນັ້ນ ຢູ່ດຽວແສນຈະປ່ຽວພອຍ

• ຄິດຮອດນ້ອງ ກໍໄດ້ແຕ່ມອງພາບຖ່າຍ
ຂໍຝາກຄວາມໃນ ຫົວໃຈກັບສາຍລົມລອຍ
ວ່າອ້າຍຍັງຮັກ ທຸກວັນຍັງຄອຍ
ຄິດເຖິງອ້າຍພຽງນ້ອຍ ແດ່ບໍ່ນໍດວງໃຈ

3) ເຖິງເຮົາໄກກັນ ຈະນານຈັກຟ້າຈັກປີ
ຮັກອ້າຍເກີດຈາກໃຈນີ້ ບໍ່ມີຫຍັງມາລຶບໄດ້
ຮັກແລະຫ່ວງນ້ອງ ຄອຍນ້ອງຢູ່ທຸກວັນໄປ
ມຸ່ງຫວັງພົບກັນຄັ້ງໃໝ່ ຫາກໃຈນ້ອງບໍ່ປ່ຽນແປງ...

# ເພງພາເພີນ

ເນື້ອຮ້ອງ & ທຳນອງ : ສ. ແສງສີຣິວັນ
ນັກຮ້ອງຕົ້ນສະບັບ : ຈັນທະຣາ ອຸເທນສັກດາ

1965

Mash Potatoe
♩ = 158

Em D Em
ແມຊ ໂປ ເຕ ໂຕ! ແມຊ ໂປ ເຕ ໂຕ! ແມຊ ໂປ ເຕ ໂຕ! ຄ່ຳ ຄືນ ອັນ

**A**

G Em
ນີ້ ຂ້າ ມີ ສຸກ ໜັກ ຈິດ ໃຈ ຄຶກ ຄັກ ຊຸກ ພາ ເຕັ້ນ ຕື່ນ ດົນ ຕຣີ ບັນ

Am G D7
ເລງ ຄື້ນ ເຄງ ຕ ລອດ ຄືນ ຊິ ວິດ ຍັ້ງ ຍືນ ຍາວ ນານ ພັນ ປີ... ໜຸ່ມ ແກ່ ແລະ

**B**

G Em
ສາວ ລື່ນ ເລີງ ເບີກ ບານ ດັ່ງ ຢູ່ ສະ ຖານ ວິ ມານ ສິນ ພະ ລີ ຟັງ ເພງ ເບີາ

Am D7 G
ໆ ແຖມ ເຫຼົ້າ ຢ່າງ ດີ ສ ອັນ ແຫ່ງ ນີ້ ໃສ ມີ ປຽບ ປານ...

**C**

G7 C G A D7
ເພີນ ກັບ ສຽງ ສຽງເພງ ອັນ ເຢົ້າ ໃຈ ຟັງ ເທົ່າ ໃດ ຍິ່ງ ພາຫຼີງ ໃຫຼ ໃຝ່ ຝັນ

C Em Am D Em
ຈັງ ຫວະ ເພງ ໂປເຕໂຕສຸກສຳ ຣານ ສ ນຸກ ສ ນານ ຕ່າງ ຟ້ອນ ກັນ ຕາມແບບນີ... ບາງຄືນກໍ

**D**

G Em
ຟ້ອນ ແມຊ ແນວ ແປກ ໜັກ ບາງ ຄົນ ຍືນ ຊຸກ ຊຸກ ຈິນ ຕາ ດີ ເພງ ພາ ເພີນ

Am D7 G
ໃຈ ລືມ ອາຍ ໄດ້ ດີ ຄວາມ ທຸກ ທີ່ ມີ ໜີ ໄປ ໝົດ ເລີຍ...

To Coda
1.

**E**

12 12
(Sax 12 BARS) (Brass 12 BARS) (Repeat verse C)

Coda

**F**

2.
D7 G D7
ຄວາມ ທຸກ ທີ່ ມີ ໜີ ໄປ ໝົດ ເລີຍ... ຄວາມ ທຸກ ທີ່ ມີ ໜີ ໄປ ໝົດ ເລີຍ...

G D7 G G7
(Brass)

8

Fine

# ເພງພາເພີນ

Key : G
Mash Potatoe

ເນື້ອຮ້ອງ & ທຳນອງ : ສ. ແສງສີຣິວັນ
ນັກຮ້ອງຕົ້ນສະບັບ : ຈັນທະຣາ ອຸເທນສັກດາ

1965

ແມຊ ໂປເຕໂຕ! ແມຊ ໂປເຕໂຕ! ແມຊ ໂປເຕໂຕ!

1) ຄ່ຳຄືນວັນນີ້ ຂ້າມີສຸກໜັກ
ຈິດໃຈຄຶກຄັກ ຊັກພາເຕັ້ນຕື່ນ
ດົນຕຣີບັນເລງ ຄື້ນເຄງຕລອດຄືນ
ຊີວິດຍັ້ງຍືນ ຍາວນານພັນປີ

2) ໝຸ່ມແກ່ແລະສາວ ລື່ນເລີງເບີກບານ
ດັ່ງຢູ່ສະຖານ ວິມານສິມພະລີ
ຟັງເພງເບົາໆ ແຖມເຫຼົ້າຢ່າງດີ
ສວັນແຫ່ງນີ້ ໃສມີປຽບປານ

• ເພີນກັບສຽງ ສຽງເພງອັນເຍົ້າໃຈ
ຟັງເທົ່າໃດ ຍິ່ງພາຫຼົງໃຫຼໃຝ່ຝັນ
ຈັງຫວະເພງ ໂປເຕໂຕສຸກສຳຣານ
ສນຸກສນານ ຕ່າງຟ້ອນກັນຕາມແບບມີ

3) ບາງຄືນກໍຟ້ອນ ແມຊແນວແປກໜັກ
ບາງຄືນຢືນຊັກ ຊັກຈີນຕາຕີ່
ເພງພາເພີນໃຈ ລືມອາຍໄດ້ດີ
ຄວາມທຸກທີ່ມີ ໜີໄປໝົດເລີຍ...

# ຮ້ອນໃນ

ເນື້ອຮ້ອງ & ທຳນອງ : ສ. ແສງສິຣິວັນ
ນັກຮ້ອງຕົ້ນສະບັບ : ຈັນທະຣາ ອຸເທນສັກດາ

Sloopy Jerk (♩ = 139) 1965

Em D C

(Guitar...)

A

B7 Em Am

ໂອະ ໆ ໆ ໆ ຮ້ອນ ໃນ ຈິດ ເຝົ້າ - ແຕ່ ຄິດ ຈົນ ອ່ອນ ໃຈ

G C D

ທັ້ງ ໆ ທີ່ ເປັນ ຍາມ ໜາວ___ ແຕ່ ຂ້າ ຍັງ ຮ້ອນ ໃນ___ ນະ! ຮ້ອນ ຢ່າງ ໃດ ກັນ...___

B

B7 Em Am

ໂອະ ໆ ໆ ໆ ຮ້ອນ ເຕັມ ທີ ດັ່ງ - ອັກ ຄີ ໄໝ້ ເຜົາ ຜານ

G C D G

ຄິດ ໆ ຍິ່ງ ພາ ປອດ ໃຈ___ ສຸດ ຮ້ອນ ໃນ ດວງ ມານ___ ຮ້ອນ ແທບ ທານ ທົນ ບໍ່ ໄຫວ...

C

Em D

ນັ່ງ ໆ - ຍັງ ຮ້ອນ ຈະ ນອນ ຍິ່ງ ຊ້ຳ ໆ ອາບ ນ້ຳ ບໍ່ ເຊົາ ໂອະ ໆ ໆ ເອົ້າ ຈະ

D C G

ຕາຍ ຄົງ ເປັນ ເພາະ ຮັກ ໜີ - ໜ້າ ຂ້າ ຈຶ່ງ ເກີດ ຮ້ອນ ໃນ___ ຮ້ອນ ໃນ ຣິ ດີ...

D

B7 Em Am

ໂອະ ໆ ໆ ໆ ຮ້ອນ ໃນ ຈິດ ຊ່ວຍ - ດັບ ພິດ ຮ້ອນ ໃຫ້ ທີ

G C D To Coda 1. G

ຈະ ທົດ ຈະ ແທນ ບຸນ ຄຸນ___ ຈະ ຄ້ຳ ຈຸນ ນານ ປີ___ ແມ່ນ ຮ້ອນ ນີ້ ຫາຍ ຈາກ ໃຈ...

E

B7 Em Am

(Solo Guitar...)

Em B7 A Em

B7 Em Am

(Solo Sax...)

Em B7 Am Em

(Repeat verse D)

F

Coda 2. G Em B7 D Em

ໃຈ... (Guitar...)

Fine

# ຮ້ອນໃນ

Key : Em
Sloopy Jerk

ເນື້ອຮ້ອງ & ທຳນອງ : ສ. ແສງສີຣິວັນ
ນັກຮ້ອງຕົ້ນສະບັບ : ຈັນທະຣາ ອຸເທນສັກດາ

1965

1) ໂອະ ໆ ໆ ໆ ຮ້ອນໃນຈິດ
ເຝົ້າແຕ່ຄິດ ຈີນອ່ອນໃຈ
ທັ້ງໆທີ່ເປັນ ຍາມໜາວ
ແຕ່ຂ້າຍັງຮ້ອນໃນ ບະ! ຮ້ອນຢ່າງໃດກັນ

2) ໂອະ ໆ ໆ ໆ ຮ້ອນເຕັມທີ
ດັ່ງອັກຄີ ໄໝ້ເຜົາຜານ
ຄິດໆຍິ່ງພາປວດໃຈ ສຸດຮ້ອນໃນດວງມານ
ຮ້ອນແທບທານ ທົນບໍ່ໄຫວ

• ນັ່ງໆຍັງຮ້ອນ ຈະນອນຍິ່ງຊ້ຳໆ
ອາບນ້ຳບໍ່ເຊົາ ໂອະ ໆ ໆ ເອົ້າຈະຕາຍ
ຄົງເປັນເພາະຮັກ ໜີໜ້າ
ຂ້າຈຶ່ງເກີດຮ້ອນໃນ ຮ້ອນໃນຣີດີ

3) ໂອະ ໆ ໆ ໆ ຮ້ອນໃນຈິດ
ຊ່ວຍດັບພິດ ຮ້ອນໃຫ້ທີ
ຈະທົດຈະແທນບຸນຄຸນ ຈະຄ້ຳຈຸນນານປີ
ແມ່ນຮ້ອນນີ້ ຫາຍຈາກໃຈ...

# ຮັກແທ້ຢູ່ໃສ

ເນື້ອຮ້ອງ & ທຳນອງ : ປ. ຕຣີຈັນ

ນັກຮ້ອງຕົ້ນສະບັບ : ຈັນສມອນ ສິນບັນດິດ

1964


















# ຮັກແທ້ຢູ່ໃສ

Key : F
Slow

ເນື້ອຮ້ອງ & ທຳນອງ : ປ. ຕຣີຈັນ
ນັກຮ້ອງຕົ້ນສະບັບ : ຈັນສມອນ ສິນບັນດິດ

1964

1) ຮັກແທ້ນັ້ນມີ ຢູ່ໃສ
ໃກ້ຫຼືໄກ ແຫ່ງໃດຮັກແທ້ນັ້ນຢູ່
ສູ່ແດນດິນຟ້າ ເບື້ອງບົນສວັນ
ຂໍຄົ້ນຄົ້ນ ໄປຈົນໄດ້

2) ຮັກແທ້ນັ້ນມີ ຢູ່ແຫ່ງໃດ
ໂລກໝູນໄປ ປຽບດັ່ງໃຈຊາຍແສນໜ່າຍ
ກ່ອນເຄີຍມຸ່ງໝາຍ ມອບໃຈແລະກາຍ
ແມ່ນຍິ່ງຫ່າງ ຮັກຍັງເລື່ອນລອຍ

• ໃຜວ່າຮັກ ຫວານຊື່ນອຸຣາ
ແຕ່ອາສນາ ນ້ອງນີ້ຕ່ຳຕ້ອຍ
ຮັກຈຶ່ງໄດ້ທຳ ຈິດໃຫ້ເລື່ອນລອຍ
ຫຼືສຸດເອື້ອມສອຍ ຮັກແທ້ຢູ່ສູງ

3) ຮັກແທ້ນັ້ນມີ ຢູ່ທີ່ໃຈ
ຫາກຊາຍໃດ ມີໃຈເຫຼື້ອມໃສໝາຍມຸ່ງ
ນ້ອງຈະຖນອມ ເທີດທູນຢູ່ສູງ
ໃຫ້ເຮືອງຮຸ່ງ ເໝືອນຈັນແຈ່ມຟ້າ...

# ລືມໜາວ

ເນື້ອຮ້ອງ & ທຳນອງ : ປ. ຕຣີຈັນ

ນັກຮ້ອງຕົ້ນສະບັບ : ຈັນສມອນ ສິນບັນດິດ

Slow ♩= 70 1970

F Dm B♭ Gm C F C7

(Trompet)



























# ລົມໜາວ

Key : F
Slow

ເນື້ອຮ້ອງ & ທຳນອງ : ປ. ຕຣີຈັນ
ນັກຮ້ອງຕົ້ນສະບັບ : ຈັນສມອນ ສິນບັນດິດ

1970

1) ລົມໜາວພັດຜ່ານ ຈິດໃຈສະທ້ານໜາວສັ່ນທົ່ວກາຍ
ຮັກດຽວທີ່ນ້ອງໝັ້ນໝາຍ ກໍມາປ່ຽນໃຈເສັຽແລ້ວແກ້ວຕາ
ຫວັງປຣາຖນາ ຫວັງໄດ້ອ້າຍມາຄູ່ຄອງ
ນ້ອງຫວັງຈະສຸກສົມປອງ ໄດ້ຢູ່ຄຽງສອງມາຄອງໃຈ...

2) ແວ່ວສຽງອ້າຍສັ່ງ ວາຈາຄ່ອຍຮັກຮັກຢູ່ບໍ່ວາຍ
ເຫມັນບໍ່ທັນສລາຍ ອ້າຍກໍກັບກາຍເສັຽແລ້ວດວງໃຈ
ຍິ່ງໂສກຍິ່ງຕຣົມ ຣະທົມໝົ່ນໝອງເລື້ອຍໄປ
ຍອດຮັກມາຫ່າງໜີໄກ ປ່ອຍນ້ອງຮ້ອງໄຫ້ນ້ອຍໃຈໂສກສັນ...

• ຫາກຄວາມຮັກ ນັ້ນສົມດວງໃຈ
ໜາວມາຄັ້ງໃດ ນ້ອງບໍ່ຫວັ່ນໄຫວໃຈຫວັ່ນ
ຈະມອບຊີວິດ ຈິດໃຈໃຫ້ອ້າຍໝາຍໝັ້ນ
ໃຈດຽວຮັກດຽວເທົ່ານັ້ນ ຊົ່ວຊີວັນສລາຍ...

3) ນ້ອງຄອຍອ້າຍຢູ່ ເມື່ອໃດອ້າຍຮູ້ວ່ານ້ອງຍັງຄອຍ
ລົມເຢັນຜ່ານມານ້ອຍໆ ນ້ອງຍັງຈະຄອຍຄອຍອ້າຍໄປຈົນຕາຍ
ຢ່າທໍຣະມານ ເຖິງນານນ້ອງນີ້ຈະຄອຍ
ສິ່ງສານນ້ອງນີ້ພຽງນ້ອຍ ຢ່າປ່ອຍໃຫ້ຄອຍຄອຍຈົນຂາດໃຈ...

# ເດືອນຕ່ຳດາວຕົກ

ເນື້ອຮ້ອງ & ທຳນອງ : ປ. ຕຣີຈັນ

ນັກຮ້ອງຕົ້ນສະບັບ : ຈັນສມອນ ສິນບັນດິດ

Slow ♩ = 70 1967

(Trumpet) (Bass)



























# ເດືອນຕໍ່າດາວຕົກ

Key : F
Slow

ເນື້ອຮ້ອງ & ທຳນອງ : ປ. ຕຣີຈັນ
ນັກຮ້ອງຕົ້ນສະບັບ : ຈັນສມອນ ສິນບັນດິດ

1967

1) ຄືນນີ່ງຍັງຊື້ງ ດວງໃຈ
ບົນຟ້າໃສ ງາມຕາ
ດາວດວງນ້ອຍ ລອຍບິນນະພາ
ພະພາຍພັດມາ ກ່ອນໝູ່ພົກສາງາມຍິ່ງ

2) ຄືນນີ່ງຍັງຊື້ງ ອຸຣາ
ຍອດປຣາຖນາ ຮັກຈິງ
ມອບກາຍໃຈ ໃຫ້ອ້າຍທຸກສິ່ງ
ລວງຍິງຫຼືໃດ ອ້າຍຈາກໄປໃສແສນດົນ

• ຄອຍ... ທຸກຄືນແລະວັນກໍຄອຍ
ຄອຍເສັຽຈົນເດືອນຕໍ່າ ໝູ່ດາວອັບເສົາມືດມົນ
ທົນ... ນ້ອງທົນໝອງໝົ່ນອຸຣາ
ອ້າຍສັນຍາໄວ້ນັ້ນ ແປຜັນປ່ຽນຄຳຫຼືໃດ

3) ດາວຕົກອີກນ້ອງ ອາວອນ
ເຝົ້າຖອດຖອນ ຣິທັຍ
ຟ້າງຽບເຫງົາ ອັບເສົາຫົວໃຈ
ອ້າຍຢູ່ຫົນໃດ ປ່ອຍໃຫ້ນ້ອງຄອຍທຸກຄືນ...

# ຣາຕຣີພາເສົ້າ

ເນື້ອຮ້ອງ & ທຳນອງ : ວິລລ້ຽມ ດິດທະວົງສ໌
ນັກຮ້ອງຕົ້ນສະບັບ : ວິລລ້ຽມ ດິດທະວົງສ໌





























